# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໗

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໙

## ສັງຍຸດຕະນິກາຍ ຂັນທະວາຣະວັກ



ສະບັບຄົ້ນຄ້ວາວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ວຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຣົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

## ມັດຊິມະປັນນາດ........ ໖໙

## ໙. ສຸປັນນະສັງຍຸດ...................................................................................... ໓໓໐

# ພຣະໄຕຣປີດົກ

## ເຫຼັ້ມທີ ໑໗

# ພຣະສູດຕັນຕະປີດົກ

## ເຫຼັ້ມທີ ໙

## ສັງຍຸດຕະນິກາຍ ຂັນທະວາຣະວັກ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ຂັນທະສັງຍຸດ

# ມູລະປັນນາດ

## ໑. ນະກຸລະປິຕຸວັກ

**ໝວດວ່າດ້ວຍນະກຸລະປິຕາຄະຫະບໍດີ**

## ໑. ນະກຸລະປິຕຸສູດ

**ວ່າດ້ວຍນະກຸລະປິຕາຄະຫະບໍດີ**

[໑] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເພສະກະລາວັນ ສະຖານທີ່ພຣະຣາດຊະທານອະໄພແກ່ໝູ່ເນື້ອ ເຂດນະຄອນສຸງສຸມາຣະຄິຣະ ແຄວ້ນພັກຄະ ຄັ້ງນັ້ນ ນະກຸລະປິຕາຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບ ທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເປັນຜູ້ຊະຣາ ສູງອາຍຸ ເປັນຜູ້ເຖົ້າ ລ່ວງການຜ່ານ

ໄວມາຫຼາຍ ມີກາຍກະສັບກະສ່າຍ ເຈັບປ່ວຍປະຈໍາ ພຣະຜູ້ມີພຣະພາກເຈົ້າແລະພິກຂຸທັງຫຼາຍຜູ້ເປັນທີ່ຈະເລີນໃຈ ຂ້າພຣະອົງກໍບໍ່ໄດ້ເຫັນເປັນປະຈໍາ ຂໍພຣະຜູ້ມີພຣະພາກເຈົ້າໂຜດໂອວາດໂຜດສັ່ງສອນຂ້າພຣະອົງດ້ວຍພຣະດໍາຣັດທີ່ເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຄະຫະບໍດີ ເລື້ອງນີ້ເປັນແນວນັ້ນ ຄະຫະບໍດີ ເລື້ອງນີ້ເປັນແນວນັ້ນ ຄວາມຈິງ ກາຍນີ້ກະສັບກະສ່າຍ ເປັນຄືໜ່ວຍໄຂ່ ມີເປືອກຫຸ້ມໄວ້ ອັນໜຶ່ງ ບຸກຄົນຜູ້ບໍລິຫານກາຍນີ້ຢູ່ ເພິ່ງຮັບຮອງຄວາມບໍ່ມີພະຍາດໄດ້ແມ່ນພຽງບຶດດຽວ ຈະມີອັນໃດນໍ ນອກຈາກຄວາມໂງ່ຈ້ໍາ ຍ້ອນເຫດນັ້ນ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເມື່ອເຮົາມີກາຍກະສັບກະສ່າຍຢູ່ ຈິດຈັກບໍ່ກະສັບກະສ່າຍ ທ່ານເພິ່ງຕັ້ງໃຈຮູ້ແນວນີ້

ລໍາດັບນັ້ນ ນະກຸລະປິຕາຄະຫະບໍດີຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າລຸກຈາກອາສະນະ ຖວາຍອະພິວາດ ທໍາປະທັກຂິນ ແລ້ວເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະສາຣີບຸດໄດ້ຖາມນະກຸລະປິຕາຄະຫະບໍດີດັ່ງນີ້ວ່າ ຄະຫະບໍດີ ອິນຊີຂອງທ່ານຜ່ອງໃສຫຼາຍ ສີໜ້າກໍບໍລິສຸດຜຸດຜ່ອງ ມື້ນີ້ ທ່ານໄດ້ຟັງທໍາມີກະຖາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າແດ່ບໍ?

ນະກຸລະປິຕາຄະຫະບໍດີຕອບວ່າ ທ່ານຜູ້ຈະເລີນ ເປັນຫຍັງຈະບໍ່ເປັນແນວນັ້ນນໍ? ບັດນີ້ພຣະຜູ້ມີພຣະພາກເຈົ້າ ຊົງຫຼັ່ງອະມະຕະທໍາຫົດຂ້ານ້ອຍດ້ວຍທໍາມີກະຖາ

ຄະຫະບໍດີ ພຣະຜູ້ມີພຣະພາກເຈົ້າ ຊົງຫຼັ່ງອະມະຕະທໍາຫົດທ່ານດ້ວຍທໍາມີກະຖາແນວໃດ?

ທ່ານຜູ້ຈະເລີນ ຂ້ານ້ອຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເປັນຜູ້ຊະຣາ ສູງອາຍຸ ເປັນຜູ້ເຖົ້າ ລ່ວງການຜ່ານໄວມາຫຼາຍ ມີກາຍກະສັບກະສ່າຍ ເຈັບປ່ວຍປະຈໍາພຣະຜູ້ມີພຣະພາກເຈົ້າ ແລະ ພິກຂຸທັງຫຼາຍ ຜູ້ເປັນທີ່ຈະເລີນໃຈ ຂ້າພຣະອົງກໍບໍ່ໄດ້ເຫັນເປັນປະຈໍາ ຂໍພຣະຜູ້ມີພຣະພາກເຈົ້າໂຜດໂອວາດ ໂຜດສັ່ງສອນຂ້າພຣະອົງດ້ວຍພຣະດໍາຣັດທີ່ເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ຂ້າພຣະອົງຕະຫຼອດການລະນານດ້ວຍເທີ້ນ

ເມື່ອຂ້ານ້ອຍຂາບທູນແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບຂ້ານ້ອຍດັ່ງນີ້ວ່າຄະຫະບໍດີ ເລື້ອງນີ້ເປັນແນວນັ້ນ ຄະຫະບໍດີ ເລື້ອງນີ້ເປັນແນວນັ້ນ ຄວາມຈິງ ກາຍນີ້ກະສັບກະສ່າຍເປັນຄືໜ່ວຍໄຂ່ ມີເປືອກຫຸ້ມໄວ້ ອັນໜຶ່ງ ບຸກຄົນຜູ້ບໍລິຫານກາຍນີ້ຢູ່ ເພິ່ງຮັບຮອງຄວາມບໍ່ມີພະຍາດໄດ້ແມ່ນພຽງບຶດດຽວ ຈະມີອັນໃດນໍ ນອກຈາກຄວາມໂງ່ຈ້ໍາ ຍ້ອນເຫດນັ້ນ ທ່ານເພິ່ງຕັ້ງ

ໃຈຮູ້ແນວນີ້ວ່າ ເມື່ອເຮົາມີກາຍກະສັບກະສ່າຍຢູ່ ຈິດຈັກບໍ່ກະສັບກະສ່າຍໄປຕາມ ທ່ານເພິ່ງຕັ້ງໃຈຮູ້ແນວນີ້

ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼັ່ງອະມະຕະທຳຫົດຂ້ານ້ອຍດ້ວຍທຳມິກະຖາແນວນີ້

ຄະຫະບໍດີ ກໍທ່ານບໍ່ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າໃຫ້ຍິ່ງຂຶ້ນໄປອີກບໍວ່າ ຂ້າແດ່ພຣະອົງຜູ້ຈະເລີນ ດ້ວຍເຫດພຽງທີ່ໃດ ບຸກຄົນຈຶ່ງຊື່ວ່າ ເປັນຜູ້ມີກາຍກະສັບກະສ່າຍ ແລະຊື່ວ່າມີຈິດກະສັບກະສ່າຍ ແລະ ດ້ວຍເຫດພຽງທີ່ໃດ ບຸກຄົນຈຶ່ງຊື່ວ່າ ເປັນຜູ້ມີກາຍກະສັບກະສ່າຍແຕ່ບໍ່ຊື່ວ່າມີຈິດກະສັບກະສ່າຍ

ທ່ານຜູ້ຈະເລີນ ແມ່ນຂ້ານ້ອຍມາຈາກບ່ອນໄກກໍເພື່ອຈະຮູ້ເນື້ອຄວາມແຫ່ງພຣະພາສິດນັ້ນໃນສຳນັກທ່ານພຣະສາຣີບຸດ ຂໍໂອກາດ ສະເພາະທ່ານພຣະສາຣີບຸດທ່ານັ້ນ ທີ່ຈະອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ່ງຊັດ

ຄະຫະບໍດີ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

## ສັກກາຍະທິດຖິ ໒໐

ເມື່ອນະກຸລະປິຕາຄະຫະບໍດີຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຄະຫະບໍດີ ບຸກຄົນຊື່ວ່າ ເປັນຜູ້ມີກາຍກະສັບກະສ່າຍ ແລະ ມີຈິດກະສັບກະສ່າຍ ເປັນແນວໃດ?

ຄື ປຸຖຸຊົນ ໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນຮູບ ຮູບເປັນຂອງເຮົາ ເມື່ອເຂົາດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນຮູບ ຮູບເປັນຂອງເຮົາ ເມື່ອຮູບນັ້ນຜັນແປເປັນແນວອື່ນ ຍ້ອນຮູບຜັນແປແລະເປັນແນວອື່ນໄປ ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກາ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ຈຶ່ງເກີດຂຶ້ນແກ່ເຂົາ

ພິຈາລະນາເຫັນ ເວທະນາໂ ດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າ ມີເວທະນາ ພິຈາລະນາເຫັນເວທະນາໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນເວທະນາ ດຳລົງຢູ່ດ້ວຍ

ຄວາມຍຶດໝັ້ນວ່າ ເຮົາເປັນເວທະນາ ເວທະນາເປັນຂອງເຮົາ ເມື່ອເຂົາດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນເວທະນາ ເວທະນາເປັນຂອງເຮົາ ເມື່ອເວທະນານັ້ນຜັນແປເປັນແນວອື່ນ ຍ້ອນເວທະນາຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນແກ່ເຂົາ

ພິຈາລະນາເຫັນ ສັນຍາ ໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີສັນຍາ ພິຈາລະນາເຫັນສັນຍາໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນສັນຍາ ດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັນຍາ ສັນຍາເປັນຂອງເຮົາ ເມື່ອເຂົາດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັນຍາ ສັນຍາເປັນຂອງເຮົາ ສັນຍານັ້ນຜັນແປເປັນແນວອື່ນ ຍ້ອນສັນຍາຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງເກີດຂຶ້ນແກ່ເຂົາ

ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີສັງຂານ ພິຈາລະນາ ເຫັນສັງຂານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນສັງຂານ ດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັງຂານ ສັງຂານເປັນຂອງເຮົາ ເມື່ອເຂົາດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັງຂານ ສັງຂານເປັນຂອງເຮົາ ເມື່ອສັງຂານນັ້ນ ຜັນແປເປັນແນວອື່ນ ຍ້ອນສັງຂານຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນແກ່ເຂົາ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ ດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນວິນຍານ ວິນຍານເປັນຂອງເຮົາ ເມື່ອເຂົາດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນວິນຍານ ວິນຍານເປັນຂອງເຮົາ ວິນຍານນັ້ນ ຜັນແປເປັນແນວອື່ນ ຍ້ອນວິນຍານຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ຈຶ່ງເກີດຂຶ້ນແກ່ເຂົາ

ຄະຫະບໍດີ ບຸກຄົນຊື່ວ່າ ເປັນຜູ້ມີກາຍກະສັບກະສ່າຍ ແລະມີຈິດກະສັບກະສ່າຍເປັນແນວນີ້ແລ

ບຸກຄົນແມ່ນຊື່ວ່າ ເປັນຜູ້ມີກາຍກະສັບກະສ່າຍ ແຕ່ບໍ່ຊື່ວ່າມີຈິດກະສັບກະສ່າຍ ເປັນແນວໃດ?

ຄື ພຣະອະຣິຍະສາວົກໃນພຣະທໍາວິໄນນີ້ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທໍາຂອງພຣະອະຣິຍະ ໄດ້ຮັບການແນະນໍາໃນທໍາຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດສະຫຼາດໃນທໍາຂອງສັດຕະບຸຣຸດ ໄດ້ຮັບການແນະນໍາໃນທໍາຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍ່ພິຈາລະນາເຫັນອັດຕາໃນຮູບ ບໍ່ດໍາລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນຮູບ ຮູບເປັນຂອງເຮົາ

ເມື່ອພຣະອະຣິຍະສາວົກນັ້ນ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນຮູບ ຮູບເປັນຂອງເຮົາ ເມື່ອຮູບນັ້ນຜັນແປເປັນແນວອື່ນ ຍ້ອນຮູບຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງບໍ່ເກີດຂຶ້ນແກ່ພຣະອະຣິຍະສາວົກນັ້ນ

ບໍ່ພິຈາລະນາເຫັນ ເວທະນາ ໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີເວທະນາ ບໍ່ພິຈາລະນາເຫັນເວທະນາໃນອັດຕາ ບໍພິຈາລະນາເຫັນອັດຕາໃນເວທະນາ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນເວທະນາ ເວທະນາເປັນຂອງເຮົາ ເມື່ອພຣະອະຣິຍະສາວົກນັ້ນ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນເວທະນາ ເວທະນາເປັນຂອງເຮົາ ເວທະນານັ້ນຜັນແປເປັນແນວອື່ນ ຍ້ອນເວທະນາຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງບໍ່ເກີດຂຶ້ນແກ່ພຣະອະຣິຍະສາວົກນັ້ນ

ບໍ່ພິຈາລະນາເຫັນ ສັນຍາ ໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີສັນຍາ ບໍ່ພິຈາລະນາເຫັນສັນຍາໃນອັດຕາ ບໍພິຈາລະນາເຫັນອັດຕາໃນສັນຍາ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັນຍາ ສັນຍາເປັນຂອງເຮົາ ເມື່ອພຣະອະຣິຍະສາວົກນັ້ນ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັນຍາ ສັນຍາເປັນຂອງເຮົາ ເມື່ອສັນຍານັ້ນຜັນແປເປັນແນວອື່ນ ຍ້ອນສັນຍາຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງບໍ່ເກີດຂຶ້ນແກ່ພຣະອະຣິຍະສາວົກນັ້ນ

ບໍ່ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີສັງຂານ ບໍ່ພິຈາລະນາເຫັນສັງຂານໃນອັດຕາ ບໍພິຈາລະນາເຫັນອັດຕາໃນສັງຂານ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັງຂານ ສັງຂານເປັນຂອງເຮົາ ເມື່ອພຣະອະຣິຍະສາວົກນັ້ນ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນສັງຂານ ສັງຂານເປັນຂອງເຮົາ ເມື່ອສັງຂານນັ້ນຜັນແປເປັນແນວອື່ນ ຍ້ອນສັງຂານຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງບໍ່ເກີດຂຶ້ນແກ່ພຣະອະຣິຍະສາວົກນັ້ນ

ບໍ່ພິຈາລະນາເຫັນ ວິນຍານ ໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ ບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນວິນຍານ ວິນຍານເປັນຂອງເຮົາ ເມື່ອພຣະອະຣິຍະສາວົກນັ້ນບໍ່ດຳລົງຢູ່ດ້ວຍຄວາມຍຶດໝັ້ນວ່າ ເຮົາເປັນວິນຍານ ວິນຍານເປັນຂອງເຮົາ ເມື່ອວິນຍານນັ້ນຜັນແປເປັນແນວອື່ນ ຍ້ອນວິນຍານຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງບໍ່ເກີດຂຶ້ນແກ່ພຣະອະຣິຍະສາວົກນັ້ນ

ຄະຫະບໍດີ ບຸກຄົນແມ່ນຊື່ວ່າ ເປັນຜູ້ມີກາຍກະສັບກະສ່າຍ ແຕ່ບໍ່ຊື່ວ່າ ມີຈິດກະສັບກະສ່າຍ ເປັນແນວນີ້ແລ

ທ່ານພຣະສາຣີບຸດໄດ້ກ່າວແນວນີ້ແລ້ວ ນະກຸລະປິຕາຄະຫະບໍດີມີໃຈຍິນດີ ຊົມຊື່ນພາສິດຂອງທ່ານພຣະສາຣີບຸດ

**ນະກຸລະປິຕຸສູດທີ ໑ ຈົບ**

# ໘. ເທວະທະຫະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ເທວະທະຫະນິຄົມ

[໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ເທວະທະຫະນິຄົມຂອງເຈົ້າສາກະຍະທັງຫຼາຍ ແຄວັ້ນສັກກະ ຄັ້ງນັ້ນ ພິກຂຸຈຳນວນຫຼາຍ ຜູ້ຕ້ອງການຈະໄປສູ່ປັດສາພູມຊົນນະບົດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍຕ້ອງການຈະໄປສູ່ປັດສາພູມຊົນນະບົດເພື່ອຢູ່ອາໄສ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ໄດ້ພາກັນບອກລາສາຣີບຸດແລ້ວບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍ ຍັງບໍ່ໄດ້ບອກລາທ່ານພຣະສາຣີບຸດເລີຍ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງໄປບອກລາສາຣີບຸດສາກ່ອນ ສາຣີບຸດເປັນຜູ້ອະນຸເຄາະເພື່ອນພິກຂຸຜູ້ປະພຶດພົມມະຈັນ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າແລ້ວ

ສະໄໝນັ້ນ ທ່ານພຣະສາຣີບຸດນັ່ງຢູ່ໃນຜາມນ້ອຍ ໆ ເຊິ່ງມີໄຄນ້ຳຂຶ້ນປົກຄຸມແຫ່ງໜຶ່ງໃນບ່ອນບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ລຳດັບນັ້ນ ພິກຂຸເຫຼົ່ານັ້ນ ຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຈາກອາສະນະ ຖວາຍອະພິວາດ ທຳປະທັກຂິນແລ້ວ ພາກັນເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານພຣະສາຣີບຸດ ພວກຂ້ານ້ອຍຕ້ອງການຈະໄປສູ່ປັດສາພູມຊົນນະບົດ ເພື່ອຢູ່ອາໄສ ພວກຂ້ານ້ອຍຂາບທູນລາພຣະສາດສະດາແລ້ວ

ທ່ານພຣະສາຣີບຸດກ່າວວ່າ ທ່ານຜູ້ມີອາຍຸທັງຫຼາຍ ກໍກະສັດຜູ້ເປັນບັນດິດແດ່ ພາມຜູ້ເປັນບັນດິດແດ່ ຄະຫະບໍດີຜູ້ເປັນບັນດິດແດ່ ສະມະນະຜູ້ເປັນບັນດິດແດ່ ຜູ້ຈະຖາມບັນຫາກັບພິກຂຸຜູ້ໄປສູ່ປະເທດຕ່າງ ໆ ມີຢູ່ ຫາກຄົນຜູ້ເປັນບັນດິດຕ້ອງການຮູ້ ຖາມວ່າ ພຣະສາດສະດາຂອງພວກທ່ານມີວາທະແນວໃດ ຕັດສອນແນວໃດ ທໍາທັງຫຼາຍ ອັນພວກທ່ານໄດ້ຟັງດີ ຮຽນດີ ໃສ່ໃຈດີ ຊົງຈໍາດີ ຮູ້ແຈ້ງດີແລ້ວດ້ວຍປັນຍາແດ່ບໍ ພວກທ່ານເມື່ອກ່າວແນວໃດ ຈຶ່ງຈະຊື່ວ່າເປັນຜູ້ເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າ ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄໍາຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີຄໍາກ່າວເຊັ່ນນັ້ນ ແລະ ການຄວບຕາມທີ່ຈະເປັນເຫດໃຫ້ຖືກຕໍາໜິໄດ້

ທ່ານຂ້ານ້ອຍ ແມ່ນພວກຂ້ານ້ອຍມາຈາກບ່ອນໄກ ກໍເພື່ອຈະຮູ້ເນື້ອຄວາມແຫ່ງພຣະພາສິດນັ້ນໃນສໍານັກທ່ານສາຣີບຸດ ຂໍໂອກາດ ສະເພາະທ່ານສາຣີບຸດທ່ານັ້ນ ທີ່ຈະອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ່ງຊັດ

ທ່ານຜູ້ມີອາຍຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ

ພິກຂຸເຫຼົ່ານັ້ນ ຮັບຄໍາແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ກໍກະສັດຜູ້ເປັນບັນດິດແດ່ ພາມຜູ້ເປັນບັນດິດແດ່ ຄະຫະບໍດີຜູ້ເປັນບັນດິດແດ່ ສະມະນະຜູ້ເປັນບັນດິດແດ່ ຜູ້ຈະຖາມບັນຫາກັບພິກຂຸຜູ້ໄປສູ່ປະເທດຕ່າງ ໆ ມີຢູ່ ຫາກຄົນຜູ້ເປັນບັນດິດຕ້ອງການຮູ້ຖາມວ່າ ພຣະສາດສະດາຂອງພວກທ່ານ ມີວາທະແນວໃດ ຕັດສອນແນວໃດ

ທ່ານທັງຫຼາຍ ເມື່ອຖືກຖາມແນວນີ້ເພິ່ງຕອບແນວນີ້ວ່າ ພຣະສາດສະດາຂອງເຮົາມີປົກກະຕິຕັດສອນໃຫ້ກໍາຈັດສັນທະຣາຄະ

ແມ່ນເມື່ອທ່ານທັງຫຼາຍໄດ້ຕອບໄປແນວນີ້ ກໍຈະເພິ່ງມີກະສັດຜູ້ເປັນບັນດິດແດ່ ພາມຜູ້ເປັນບັນດິດແດ່ ຄະຫະບໍດີຜູ້ເປັນບັນດິດແດ່ ສະມະນະຜູ້ເປັນບັນດິດແດ່ ຖາມບັນຫາໃຫ້ຍິ່ງຂຶ້ນໄປ ຫາກຄົນຜູ້ເປັນບັນດິດຕ້ອງການຮູ້ຖາມວ່າ ກໍພຣະສາດສະດາຂອງພວກທ່ານ ມີປົກກະຕິຕັດສອນໃຫ້ກໍາຈັດສັນທະຣາຄະໃນສິ່ງໃດນໍ?

ທ່ານທັງຫຼາຍ ຖືກຖາມແນວນີ້ເພິ່ງຕອບແນວນີ້ວ່າ ພຣະສາດສະດາມີປົກກະຕິຕັດສອນໃຫ້ກໍາຈັດສັນທະຣາຄະໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ພຣະສາດສະດາ ມີປົກກະຕິຕັດສອນໃຫ້ກໍາຈັດສັນທະຣາຄະໃນວິນຍານ

ແມ່ນເມື່ອທ່ານທັງຫຼາຍ ໄດ້ຕອບໄປແນວນີ້ ກໍຈະເພິ່ງມີກະສັດຜູ້ເປັນບັນດິດແດ່ ພາມຜູ້ເປັນບັນດິດແດ່ ຄະຫະບໍດີຜູ້ເປັນບັນດິດແດ່ ສະມະນະຜູ້ເປັນບັນດິດແດ່ ຖາມບັນຫາໃຫ້ຍິ່ງຂຶ້ນໄປ ຫາກຄົນຜູ້ເປັນບັນດິດຕ້ອງການຮູ້ຖາມວ່າ ກໍພຣະສາດສະດາຂອງພວກທ່ານຊົງເຫັນໂທດ

ອັນໃດຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນຣູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນວິນຍານ

ທ່ານທັງຫຼາຍ ຖືກຖາມແນວນີ້ເພິ່ງຕອບແນວນີ້ວ່າ ເມື່ອບຸກຄົນຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນຣູບ ຍ້ອນຣູບນັ້ນຜັນແປ ແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນ

ເມື່ອບຸກຄົນ ຍັງບໍ່ປາສະຈາກຄວາມກຳໜັດ ຯລຯ ໃນເວທະນາ ຯລຯ
ເມື່ອບຸກຄົນ ຍັງບໍ່ປາສະຈາກຄວາມກຳໜັດ ຯລຯ ໃນສັນຍາ ຯລຯ

ເມື່ອບຸກຄົນ ຍັງບໍ່ປາສະຈາກຄວາມກຳໜັດ ຯລຯ ບໍ່ປາສະຈາກຄວາມທະຍານຢາກໃນສັງຂານ ຍ້ອນສັງຂານເຫຼົ່ານັ້ນ ຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງເກີດຂຶ້ນ

ເມື່ອບຸກຄົນຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນວິນຍານ ຍ້ອນວິນຍານນັ້ນຜັນແປແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນ

ພຣະສາດສະດາຂອງພວກເຮົາ ຊົງເຫັນໂທດນີ້ເອງ ຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນຣູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນວິນຍານ

ແມ່ນເມື່ອທ່ານທັງຫຼາຍໄດ້ຕອບໄປແນວນີ້ ກໍຈະເພິ່ງມີກະສັດຜູ້ເປັນບັນດິດແດ່ ພາມຜູ້ເປັນບັນດິດແດ່ ຄະຫະບໍດີຜູ້ເປັນບັນດິດແດ່ ສະມະນະຜູ້ເປັນບັນດິດແດ່ ຖາມບັນຫາໃຫ້ຍິ່ງຂຶ້ນໄປ ຫາກຄົນຜູ້ເປັນບັນດິດຕ້ອງການຮູ້ຖາມວ່າ ກໍພຣະສາດສະດາຂອງພວກທ່ານ ຊົງເຫັນອານິສົງອັນໃດ ຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນຣູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນວິນຍານ

ທ່ານທັງຫຼາຍ ຖືກຖາມແນວນີ້ ເພິ່ງຕອບແນວນີ້ວ່າ ເມື່ອບຸກຄົນປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນຣູບ ຍ້ອນຣູບນັ້ນ ຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງບໍ່ເກີດຂຶ້ນ

ເມື່ອບຸກຄົນ ປາສະຈາກຄວາມກຳໜັດ ຯລຯ ໃນເວທະນາ ຯລຯ

ເມື່ອບຸກຄົນ ປາສະຈາກຄວາມກຳໜັດ ຯລຯ ໃນສັນຍາ ຯລຯ

ເມື່ອບຸກຄົນ ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນສັງຂານ ຍ້ອນສັງຂານເຫຼົ່ານັ້ນ ຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງບໍ່ເກີດຂຶ້ນ

ເມື່ອບຸກຄົນ ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນວິນຍານ ຍ້ອນວິນຍານນັ້ນ ຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງບໍ່ເກີດຂຶ້ນ

ພຣະສາດສະດາຂອງພວກເຮົາ ຊົງເຫັນອານິສົງນີ້ເອງ ຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຈຶ່ງຕັດສອນໃຫ້ກຳຈັດສັນທະຣາຄະໃນວິນຍານ

ທ່ານຜູ້ມີອາຍຸທັງຫຼາຍ ເມື່ອບຸກຄົນ ເຂົ້າເຖິງອະກຸສົນທຳທັງຫຼາຍຢູ່ ຈັກມີການຢູ່ເປັນສຸກ ບໍ່ລຳບາກ ບໍ່ຄັບແຄ້ນ ບໍ່ເດືອດຮ້ອນໃນປັດຈຸບັນນີ້ ແລະ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ສຸກຄະຕິ ພຣະຜູ້ມີພຣະພາກເຈົ້າ ກໍຈະບໍ່ຊົງສັນເສີນການລະອະກຸສົນທຳທັງຫຼາຍໄວ້ ແຕ່ເມື່ອບຸກຄົນເຂົ້າເຖິງອະກຸສົນທຳທັງຫຼາຍຢູ່ ຈຶ່ງມີການຢູ່ເປັນທຸກ ລຳບາກ ຄັບແຄ້ນໃຈ ເດືອດຮ້ອນໃນປັດຈຸບັນນີ້ຢ່າງແນ່ນອນ ແລະ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ທຸກຄະຕິ ສັນນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງສັນເສີນການລະອະກຸສົນທຳທັງຫຼາຍໄວ້

ທ່ານຜູ້ມີອາຍຸທັງຫຼາຍ ເມື່ອບຸກຄົນເຂົ້າເຖິງກຸສົນທຳທັງຫຼາຍຢູ່ ກໍຈັກມີການຢູ່ເປັນທຸກ ເດືອດຮ້ອນ ຄັບແຄ້ນໃຈ ຮ້ອນຮົນ ໃນປັດຈຸບັນຢ່າງແນ່ນອນ ແລະ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ທຸກຄະຕິ ພຣະຜູ້ມີພຣະພາກເຈົ້າ ກໍຈະບໍ່ຊົງສັນເສີນຄວາມເຖິງພ້ອມກຸສົນທຳທັງຫຼາຍໄວ້ ແຕ່ເມື່ອບຸກຄົນເຂົ້າເຖິງກຸສົນທຳທັງຫຼາຍ ຈຶ່ງມີການຢູ່ເປັນສຸກ ບໍ່ເດືອດຮ້ອນ ບໍ່ຄັບແຄ້ນໃຈ ບໍ່ຮ້ອນຮົນໃນປັດຈຸບັນນີ້ຢ່າງແນ່ນອນ ແລະ ຫຼັງຈາກຕາຍແລ້ວເພິ່ງຫວັງໄດ້ສຸກຄະຕິ ສັນນັ້ນ ພຣະຜູ້ພຣະພາກເຈົ້າ ຈຶ່ງຊົງສັນເສີນຄວາມເຖິງພ້ອມກຸສົນທຳທັງຫຼາຍໄວ້

ທ່ານພຣະສາຣີບຸດ ໄດ້ກ່າວແນວນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງທ່ານພຣະສາຣີບຸດ

**ເທວະທະຫະສູດທີ ໘ ຈົບ**

# ៣. ຫະລິດທິການີສູດ

## ວ່າດ້ວຍຫະລິດທິການີຄະຫະບໍດີ

[៣] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ທ່ານພຣະມະຫາກັດຈານະ ຢູ່ພູທີ່ມີໜ້າຜາສູງຊັນ ເຂດເມືອງກຸນຣະຄະຣະ ແຄວ້ນອະວັນຕີ ຄັ້ງນັ້ນ ຄະຫະບໍດີຊື່ ຫະລິດທິການີ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາກັດຈານະດັ່ງນີ້ວ່າ ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ ໃນມາຄັນທິຍະປັນຫາອັນມາໃນອັດຖະກະວັກ ວ່າ

ບຸກຄົນ ລະບ່ອນຢູ່ແລ້ວ ບໍ່ທ່ຽວໄປຫາບ່ອນອາໄສ
ມຸນີບໍ່ທຳຄວາມມີເຍື່ອໃຍໃນເຮືອນ ວ່າງຈາກກາມທັງຫຼາຍ
ບໍ່ມຸ້ງຫວັງໃນອັດຕະພາບຕໍ່ໄປ ບໍ່ເພິ່ງກ່າວຄຳເວົ້າຂັດແຍ່ງຜູ້ອື່ນ

ຂ້າແດ່ ທ່ານມະຫາກັດຈານະຜູ້ຈະເລີນ ເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ ເພິ່ງຮູ້ໂດຍພິດສະດານໄດ້ແນວໃດ?

ທ່ານພຣະມະຫາກັດຈານະຕອບວ່າ ຄະຫະບໍດີ ຮູບທາດເປັນບ່ອນອາໄສແຫ່ງວິນຍານ ວິນຍານທີ່ມັດພັນກັບຣາຄະໃນຮູບທາດ ຕັດຮຽກວ່າ ຜູ້ທ່ຽວໄປຫາບ່ອນຢູ່ ເວທະນາທາດເປັນບ່ອນອາໄສແຫ່ງວິນຍານ ວິນຍານທີ່ມັດພັນກັບຣາຄະໃນເວທະນາທາດ ຕັດຮຽກວ່າ ຜູ້ທ່ຽວໄປຫາບ່ອນຢູ່

ສັນຍາທາດເປັນບ່ອນອາໄສແຫ່ງວິນຍານ ວິນຍານທີ່ມັດພັນກັບຣາຄະໃນສັນຍາທາດຕັດຮຽກວ່າ ຜູ້ທ່ຽວໄປຫາບ່ອນຢູ່

ສັງຂານທາດເປັນບ່ອນອາໄສແຫ່ງວິນຍານ ວິນຍານທີ່ມັດພັນກັບຣາຄະໃນສັງຂານທາດ ຕັດຮຽກວ່າ ຜູ້ທ່ຽວໄປຫາບ່ອນຢູ່

ຄະຫະບໍດີ ບຸກຄົນຜູ້ທ່ຽວໄປຫາບ່ອນຢູ່ ເປັນແນວນີ້ແລ

ບຸກຄົນຜູ້ບໍ່ທ່ຽວໄປຫາບ່ອນຢູ່ ເປັນແນວໃດ?

ຄື ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມ

ຍຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນຮູບທາດ ພຣະຕະຖາຄົດຊົງລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສັນນັ້ນ ບັນດິດ ຈຶ່ງຮຽກພຣະຕະຖາຄົດວ່າ ຜູ້ບໍ່ຊົງຫ່ຽວໄປຫາບ່ອນຢູ່

ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນເວທະນາທາດ ຯລຯ ໃນສັນຍາທາດ ຯລຯ ໃນສັງຂານທາດ ຯລຯ

ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນວິນຍານທາດ ພຣະຕະຖາຄົດຊົງລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສັນນັ້ນ ບັນດິດຈຶ່ງຮຽກພຣະຕະຖາຄົດວ່າ ຜູ້ບໍ່ຊົງຫ່ຽວໄປຫາບ່ອນຢູ່

ຄະຫະບໍດີ ບຸກຄົນຜູ້ບໍ່ຫ່ຽວໄປຫາບ່ອນຢູ່ ເປັນແນວນີ້ແລ

ບຸກຄົນຜູ້ຫ່ຽວໄປຫາບ່ອນອາໄສ ເປັນແນວໃດ?

ຄື ຄວາມຫ່ຽວໄປຫາ ແລະຄວາມມັດພັນກັບທີ່ອາໄສ ຄື ຮູບນິມິດ ຕັດຮຽກວ່າ ຜູ້ຫ່ຽວໄປຫາບ່ອນອາໄສ

ຄວາມຫ່ຽວໄປຫາ ແລະຄວາມມັດພັນກັບບ່ອນອາໄສ ຄື ສັດທະນິມິດ ຯລຯ ຄັນທະນິມິດ ຯລຯ ຣົດນິມິດ ຯລຯ ໂຜດຖັບພະນິມິດ ຯລຯ ທຳມະນິມິດ ຕັດຮຽກວ່າ ຜູ້ຫ່ຽວໄປຫາບ່ອນອາໄສ

ຄະຫະບໍດີ ບຸກຄົນຜູ້ຫ່ຽວໄປຫາບ່ອນອາໄສ ເປັນແນວນີ້ແລ

ບຸກຄົນຜູ້ບໍ່ຫ່ຽວໄປຫາບ່ອນອາໄສ ເປັນແນວໃດ?

ຄື ຄວາມຫ່ຽວໄປຫາແລະຄວາມມັດພັນກັບບ່ອນອາໄສ ຄືຮູບນິມິດ ພຣະຕະຖາຄົດຊົງລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສັນນັ້ນ ບັນດິດຈຶ່ງຮຽກພຣະຕະຖາຄົດວ່າ ຜູ້ບໍ່ຊົງຫ່ຽວໄປຫາບ່ອນອາໄສ

ຄວາມຫ່ຽວໄປຫາ ແລະຄວາມມັດພັນກັບບ່ອນອາໄສ ຄືສັດທະນິມິດ ຯລຯ ຄັນທະນິມິດ

ຯລຯ ອິດນິມິດ ຯລຯ ໂຜດຖັບພະນິມິດ ຯລຯ ທຳມະນິມິດ ພຣະຕະຖາຄົດລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ສັນນັ້ນ ບັນດິດຈຶ່ງຮຽກພຣະຕະຖາຄົດວ່າ ຜູ້ບໍ່ຊົງຫ່ຽວໄປຫາບ່ອນອາໄສ

ຄະຫະບໍດີ ບຸກຄົນຜູ້ບໍ່ຫ່ຽວໄປຫາບ່ອນອາໄສ ເປັນແນວນີ້ແລ

ບຸກຄົນ ຜູ້ເກີດຄວາມເຍື່ອໃຍໃນເຮືອນ ເປັນແນວໃດ?

ຄື ພິກຂຸລາງອົງໃນພຣະທຳວິໄນນີ້ ກ່ຽວຂ້ອງຢູ່ກັບຄະຫຼືຫັດ ເພີດເພີນຮ່ວມກັນ ເສົ້າໂສກຮ່ວມກັນ ເມື່ອພວກເຂົາສຸກ ກໍສຸກນຳ ເມື່ອພວກເຂົາທຸກ ກໍທຸກນຳ ເມື່ອພວກເຂົາມີກິດທີ່ຄວນເຮັດເກີດຂຶ້ນ ກໍລົງມືຊ່ວຍເຫຼືອດ້ວຍຕົນເອງ

ຄະຫະບໍດີ ບຸກຄົນຜູ້ເກີດຄວາມເຍື່ອໃຍໃນເຮືອນ ເປັນແນວນີ້ແລ

ບຸກຄົນ ຜູ້ບໍ່ເກີດຄວາມເຍື່ອໃຍໃນເຮືອນ ເປັນແນວໃດ?

ຄື ພິກຂຸລາງອົງໃນພຣະທຳວິໄນນີ້ ບໍ່ກ່ຽວຂ້ອງຢູ່ກັບຄະຫຼືຫັດ ບໍ່ເພີດເພີນຮ່ວມກັນບໍ່ເສົ້າໂສກຮ່ວມກັນ ເມື່ອພວກເຂົາສຸກ ກໍບໍ່ໄດ້ສຸກນຳ ເມື່ອພວກເຂົາທຸກ ກໍບໍ່ໄດ້ທຸກນຳ ເມື່ອພວກເຂົາມີກິດທີ່ຄວນເຮັດເກີດຂຶ້ນ ກໍບໍ່ລົງມືຊ່ວຍເຫຼືອດ້ວຍຕົນເອງ

ຄະຫະບໍດີ ບຸກຄົນຜູ້ບໍ່ເກີດຄວາມເຍື່ອໃຍໃນເຮືອນ ເປັນແນວນີ້ແລ

ບຸກຄົນ ຜູ້ບໍ່ວ່າງຈາກກາມທັງຫຼາຍ ເປັນແນວໃດ?

ຄື ພິກຂຸລາງອົງໃນພຣະທຳວິໄນນີ້ ບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນກາມທັງຫຼາຍ

ຄະຫະບໍດີ ບຸກຄົນຜູ້ບໍ່ວ່າງຈາກກາມທັງຫຼາຍ ເປັນແນວນີ້ແລ

ບຸກຄົນຜູ້ວ່າງຈາກກາມທັງຫຼາຍ ເປັນແນວໃດ?

ຄື ພິກຂຸລາງອົງໃນພຣະທຳວິໄນນີ້ ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນກາມທັງຫຼາຍ

ຄະຫະບໍດີ ບຸກຄົນຜູ້ວ່າງຈາກກາມທັງຫຼາຍ ເປັນແນວນີ້ແລ

ບຸກຄົນ ຜູ້ມຸ້ງຫວັງອັດຕະພາບຕໍ່ໄປ ເປັນແນວໃດ?

ຄື ພິກຂຸລາງອົງໃນພຣະທຳວິໄນນີ້ ມີຄວາມມຸ້ງຫວັງແນວນີ້ວ່າ ໃນອະນາຄົດຕະການ ເຮົາເພິ່ງມີຮູບແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີເວທະນາແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີສັນຍາແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີສັງຂານແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີວິນຍານແນວນີ້

ຄະຫະບໍດີ ບຸກຄົນ ຜູ້ມຸ້ງຫວັງອັດຕະພາບຕໍ່ໄປ ເປັນແນວນີ້ແລ

ບຸກຄົນ ຜູ້ບໍ່ມຸ້ງຫວັງອັດຕະພາບຕໍ່ໄປ ເປັນແນວໃດ?

ຄື ພິກຂຸລາງອົງໃນພຣະທຳວິໄນນີ້ ບໍ່ມີຄວາມມຸ້ງຫວັງແນວນີ້ວ່າ ໃນອະນາຄົດຕະການ ເຮົາເພິ່ງມີຮູບແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີເວທະນາແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີສັນຍາແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີສັງຂານແນວນີ້ ຯລຯ ໃນອະນາຄົດຕະການ ເຮົາເພິ່ງມີວິນຍານແນວນີ້

ຄະຫະບໍດີ ບຸກຄົນຜູ້ບໍ່ມຸ້ງຫວັງອັດຕະພາບຕໍ່ໄປ ເປັນແນວນີ້ແລ

ບຸກຄົນ ຜູ້ກ່າວຄຳເວົ້າຂັດແຍ່ງກັນ ເປັນແນວໃດ?

ຄື ພິກຂຸລາງອົງໃນພຣະທຳວິໄນນີ້ ເປັນຜູ້ກ່າວຄຳເວົ້າປານນີ້ວ່າ ທ່ານບໍ່ຮູ້ພຣະທຳວິໄນນີ້ ເຮົາຮູ້ພຣະທຳວິໄນນີ້ ທ່ານຮູ້ພຣະທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ເຮົາປະຕິບັດຖືກ ຄຳທີ່ຄວນກ່າວກ່ອນ ທ່ານກໍກ່າວພາຍຫຼັງ ຄຳທີ່ຄວນກ່າວພາຍຫຼັງ ທ່ານກໍກ່າວກ່ອນ ຄຳຂອງເຮົາມີປະໂຫຍດ ຄຳຂອງທ່ານບໍ່ມີປະໂຫຍດ ຂໍ້ທີ່ທ່ານເຄີຍປະຕິບັດມາຜິດສາແລ້ວ ເຮົາກ່າວຫາທ່ານ ທ່ານຈົ່ງແກ້ຂໍ້ກ່າວຫາສາ ເຮົາຂົ່ມທ່ານໄດ້ແລ້ວ ຫຼື ຫາກທ່ານສາມາດກໍຈົ່ງແກ້ໄຂເທີ້ນ

ຄະຫະບໍດີ ບຸກຄົນຜູ້ກ່າວຄຳເວົ້າຂັດແຍ່ງກັນ ເປັນແນວນີ້ແລ

ບຸກຄົນຜູ້ບໍ່ກ່າວຄຳເວົ້າຂັດແຍ່ງ ເປັນແນວໃດ?

ຄື ພິກຂຸ ລາງອົງໃນພຣະທຳວິໄນນີ້ ເປັນຜູ້ບໍ່ກ່າວຄຳເວົ້າປານນີ້ວ່າ ທ່ານບໍ່ຮູ້ພຣະທຳວິໄນນີ້ ເຮົາຮູ້ພຣະທຳວິໄນນີ້ ທ່ານຮູ້ພຣະທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ເຮົາປະຕິບັດຖືກ ຄຳທີ່ຄວນກ່າວກ່ອນ ທ່ານກໍກ່າວພາຍຫຼັງ ຄຳທີ່ຄວນກ່າວພາຍຫຼັງ ທ່ານກໍກ່າວກ່ອນ ຄຳຂອງເຮົາມີປະໂຫຍດ ຄຳຂອງທ່ານບໍ່ມີປະໂຫຍດ ຂໍ້ທີ່ທ່ານເຄີຍປະຕິບັດມາຜິດສາແລ້ວ ເຮົາກ່າວຫາທ່ານ ທ່ານຈົ່ງແກ້ຂໍ້ກ່າວຫາ ເຮົາຂົ່ມທ່ານໄດ້ແລ້ວ ຫຼື ຫາກທ່ານສາມາດກໍຈົ່ງແກ້ໄຂເທີ້ນ

ຄະຫະບໍດີ ບຸກຄົນຜູ້ບໍ່ກ່າວຄຳເວົ້າຂັດແຍ່ງກັນ ເປັນແນວນີ້ແລ

ຄະຫະບໍດີ ພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນມາຄັນທິຍະປັນຫາ ອັນມາໃນອັດຖະກະວັກ ວ່າ

ບຸກຄົນລະບ່ອນຢູ່ແລ້ວ ບໍ່ທ່ຽວໄປຫາບ່ອນອາໄສ
ມຸນີບໍ່ທຳຄວາມເຍື່ອໃຍໃນເຮືອນ ວ່າງຈາກກາມທັງຫຼາຍ
ບໍ່ມຸ້ງຫວັງອັດຕະພາບຕໍ່ໄປ ບໍ່ເພິ່ງກ່າວຄຳເວົ້າຂັດແຍ່ງກັນ

ຄະຫະບໍດີ ເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າ ຕັດໄວ້ໂດຍຫຍໍ້ ເພິ່ງຮູ້ໂດຍພິດສະດານແນວນີ້ແລ

**ຫະລິດທິການີສູດທີ ໓ ຈົບ**

# ໔. ທຸຕິຍະຫະລິດທິການີສູດ

## ວ່າດ້ວຍຫະລິດທິການີຄະຫະບໍດີ ສູດທີ ໔

[໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະມະຫາກັດຈານະຢູ່ພູທີ່ມີໜ້າຜາສູງຊັນ ເຂດເມືອງກຸນຣະຄະຣະ ແຄວັ້ນອະວັນຕີ ຄັ້ງນັ້ນ ຄະຫະບໍດີຊື່ຫະລິດທິການີເຂົ້າໄປຫາທ່ານພຣະມະຫາກັດຈານະ ຮອດບ່ອນຢູ່ ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາກັດຈານະດັ່ງນີ້ວ່າ ຂ້າແດ່ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະພາສິດນີ້ໃນສັກກະປັນຫາວ່າ ສະມະນະພາມ ຜູ້ລຸດພົ້ນຍ້ອນໝົດຕັນຫາທໍ່ນັ້ນ ຈຶ່ງຈະມີຄວາມສຳເລັດຂັ້ນສູງສຸດ ມີຄວາມກະເສມຈາກໂຍຄະຂັ້ນສູງສຸດ ມີພົມມະຈັນຂັ້ນສູງສຸດ ມີຈຸດໝາຍຂັ້ນສູງສຸດ ເປັນຜູ້ປະເສີດສຸດກວ່າເທວະດາແລະມະນຸດທັງຫຼາຍ ຂ້າແດ່ ທ່ານຜູ້ຈະເລີນ ເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ ເພິ່ງຮູ້ໂດຍພິດສະດານໄດ້ແນວໃດ? ຂ້ານ້ອຍ

ພຣະມະຫາກັດຈານະໄດ້ກ່າວວ່າ ຄະຫະບໍດີ ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນຈົມໃນຮູບທາດ ທ່ານກ່າວວ່າ ຈິດລຸດພົ້ນດີແລ້ວ ຍ້ອນຄວາມໝົດໄປ ຄາຍກຳໜັດດັບ ສະລະ ປ່ອຍວາງຄວາມພໍໃຈເປັນຕົ້ນເຫຼົ່ານັ້ນ

ຄວາມພໍໃຈ ຄວາມກຳໜັດ ຯລຯ ໃນເວທະນາທາດ ຯລຯ ໃນສັນຍາທາດ ຯລຯ ໃນສັງຂານທາດ ຯລຯ

ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນວິນຍານທາດ ທ່ານກ່າວວ່າ ຈິດລຸດພົ້ນດີແລ້ວ ຍ້ອນຄວາມໝົດໄປ ຄາຍກຳໜັດ ດັບ ສະລະ ປ່ອຍວາງຄວາມພໍໃຈເປັນຕົ້ນເຫຼົ່ານັ້ນ

ຄະຫະບໍດີ ພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນສັກກະປັນຫາວ່າ ສະມະນະພາມຜູ້ລຸດພົ້ນຍ້ອນໝົດຕັນຫາທໍ່ນັ້ນ ຈຶ່ງຈະມີຄວາມສຳເລັດຂັ້ນສູງສຸດ ມີຄວາມກະເສມຈາກໂຍຄະຂັ້ນສູງສຸດ ມີພົມມະຈັນຂັ້ນສູງສຸດ ມີຈຸດໝາຍຂັ້ນສູງສຸດ ເປັນຜູ້ປະເສີດສຸດກວ່າເທວະດາແລະມະນຸດທັງຫຼາຍ

ຄະຫະບໍດີ ເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ ເພິ່ງຮູ້ໂດຍພິດສະດານແນວນີ້ແລ

**ທຸຕິຍະຫະລິດທິການີສູດທີ ໔ ຈົບ**

# ໕. ສະມາທິສູດ

## ວ່າດ້ວຍສະມາທິ

[໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຢູ່ບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງຈະເລີນສະມາທິເທີ້ນ ພິກຂຸຜູ້ມີຈິດຕັ້ງໝັ້ນ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

ຮູ້ແຈ້ງອັນໃດນໍ? ຕາມຄວາມເປັນຈິງ

ຄື ພິກຂຸ ຮູ້ແຈ້ງຄວາມເກີດແລະຄວາມດັບແຫ່ງຮູບ ຄວາມເກີດແລະຄວາມດັບແຫ່ງເວທະນາ ຄວາມເກີດແລະຄວາມດັບແຫ່ງສັນຍາ ຄວາມເກີດແລະຄວາມດັບແຫ່ງສັງຂານ ຄວາມເກີດແລະຄວາມດັບແຫ່ງວິນຍານ

ອັນໃດເປັນຄວາມເກີດແຫ່ງຮູບ ອັນໃດເປັນຄວາມເກີດແຫ່ງເວທະນາ ອັນໃດເປັນຄວາມເກີດແຫ່ງສັນຍາ ອັນໃດເປັນຄວາມເກີດແຫ່ງສັງຂານ ອັນໃດເປັນຄວາມເກີດແຫ່ງວິນຍານ

ຄື ພິກຂຸໃນທຳວິໄນນີ້ ເພີດເພີນ ເຊີຍຊົມ ຍຶດຕິດ

ພິກຂຸ ເພີດເພີນ ເຊີຍຊົມ ຍຶດຕິດອັນໃດນໍ?

ຄື ພິກຂຸ ເພີດເພີນ ເຊີຍຊົມ ຍຶດຕິດຮູບ ເມື່ອທ່ານເພີດເພີນ ເຊີຍຊົມ ຍຶດຕິດຮູບ ຄວາມເພີດເພີນຈຶ່ງເກີດຂຶ້ນ ຄວາມເພີດເພີນໃນຮູບເປັນອຸປາທານ ຍ້ອນອຸປາທານຂອງພິກຂຸນັ້ນເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການແນວນີ້

ພິກຂຸເພີດເພີນ ເຊີຍຊົມ ຍຶດຕິດເວທະນາ ฯລฯ
ພິກຂຸເພີດເພີນ ເຊີຍຊົມ ຍຶດຕິດສັນຍາ ฯລฯ
ພິກຂຸເພີດເພີນ ເຊີຍຊົມ ຍຶດຕິດສັງຂານ ฯລฯ

ພິກຂຸເພີດເພີນເຊີຍຊົມ ຍຶດຕິດວິນຍານ ເມື່ອທ່ານເພີດເພີນ ເຊີຍຊົມ ຍຶດຕິດວິນຍານ ຄວາມເພີດເພີນຈຶ່ງເກີດຂຶ້ນ ຄວາມເພີດເພີນໃນວິນຍານເປັນອຸປາທານ ຍ້ອນອຸປາທານຂອງພິກຂຸນັ້ນເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ฯລฯ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການແນວນີ້

ພິກຂຸທັງຫຼາຍ ນີ້ເປັນຄວາມເກີດຂຶ້ນແຫ່ງຮູບ ນີ້ເປັນຄວາມເກີດຂຶ້ນແຫ່ງເວທະນາ ນີ້ເປັນຄວາມເກີດຂຶ້ນແຫ່ງສັນຍາ ນີ້ເປັນຄວາມເກີດຂຶ້ນແຫ່ງສັງຂານ ນີ້ເປັນຄວາມເກີດຂຶ້ນແຫ່ງວິນຍານ

ອັນໃດເປັນຄວາມດັບແຫ່ງຮູບ ฯລฯ ແຫ່ງເວທະນາ ฯລฯ ແຫ່ງສັນຍາ ฯລฯ ແຫ່ງສັງຂານ ອັນໃດ ເປັນຄວາມດັບແຫ່ງວິນຍານ

ຄື ພິກຂຸໃນທຳວິໄນນີ້ ບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດ

ພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດອັນໃດນໍ?

ຄື ພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດຮູບ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດຮູບ ຄວາມເພີດເພີນໃນຮູບຈຶ່ງດັບ ຍ້ອນຄວາມເພີດເພີນຂອງພິກຂຸນັ້ນດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ฯລฯ ຄວາມດັບແຫ່ງກອງທຸກທັງມວນ ນີ້ມີໄດ້ດ້ວຍປະການແນວນີ້

ພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດເວທະນາ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດເວທະນາ ຄວາມເພີດເພີນໃນເວທະນາຈຶ່ງດັບ ຍ້ອນຄວາມເພີດເພີນຂອງພິກຂຸນັ້ນດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການແນວນີ້

ພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດສັນຍາ ຯລຯ

ພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດສັງຂານ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດສັງຂານ ຄວາມເພີດເພີນໃນສັງຂານຈຶ່ງດັບ ຍ້ອນຄວາມເພີດເພີນຂອງພິກຂຸນັ້ນດັບ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການແນວນີ້

ພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດວິນຍານ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດວິນຍານ ຄວາມເພີດເພີນໃນວິນຍານຈຶ່ງດັບ ຍ້ອນຄວາມເພີດເພີນຂອງພິກຂຸນັ້ນດັບ ອຸປາທານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການແນວນີ້

ພິກຂຸທັງຫຼາຍ ນີ້ເປັນຄວາມດັບແຫ່ງຮູບ ນີ້ເປັນຄວາມດັບແຫ່ງເວທະນາ ນີ້ເປັນຄວາມດັບແຫ່ງສັນຍາ ນີ້ເປັນຄວາມດັບແຫ່ງສັງຂານ ນີ້ເປັນຄວາມດັບແຫ່ງວິນຍານ

**ສະມາທິສູດທີ ໕ ຈົບ**

# ໖. ປະຕິສັນລານະສູດ

## ວ່າດ້ວຍການຫຼີບຫຼີກ

[໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງປະກອບຄວາມພຽນໃນບ່ອນສະງັດ ພິກຂຸຜູ້ຫຼີບຫຼີກຢູ່ໃນບ່ອນສະງັດ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

ຮູ້ແຈ້ງອັນໃດນໍ? ຕາມຄວາມເປັນຈິງ

ຄື ພິກຂຸຮູ້ແຈ້ງຄວາມເກີດແລະຄວາມດັບແຫ່ງຮູບ ຄວາມເກີດແລະຄວາມດັບແຫ່ງເວທະນາ ຄວາມເກີດແລະຄວາມດັບແຫ່ງສັນຍາ ຄວາມເກີດແລະຄວາມດັບແຫ່ງສັງຂານ ຄວາມເກີດແລະຄວາມດັບແຫ່ງວິນຍານ (ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານຄືໃນສູດທີ ໑)

**ປະຕິສັນລານະສູດທີ ໖ ຈົບ**

# ໗. ອຸປາທາປະຣິຕັດສະນາສູດ

## ວ່າດ້ວຍຄວາມສະດຸ້ງຍ້ອນຖືໝັ້ນ

[໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມສະດຸ້ງຍ້ອນຖືໝັ້ນ ແລະຄວາມບໍ່ສະດຸ້ງຍ້ອນບໍ່ຖືໝັ້ນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຄວາມສະດຸ້ງຍ້ອນຖືໝັ້ນ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ຮູບຂອງເຂົາຜັນແປເປັນແນວອື່ນ ຍ້ອນຮູບຜັນແປແລະເປັນແນວອື່ນ ວິນຍານຈຶ່ງໝຸນວຽນໄປຕາມຄວາມຜັນແປແຫ່ງຮູບ ຄວາມສະດຸ້ງ ແລະ ຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງຮູບ ກໍຄອບງຳຈິດຂອງປຸຖຸຊົນນັ້ນຕັ້ງຢູ່ ຍ້ອນຈິດຖືກຄອບງຳ ປຸຖຸຊົນນັ້ນຈຶ່ງຢ້ານກົວ ລຳບາກໃຈ ຫ່ວງໃຍ ແລະ ສະດຸ້ງຍ້ອນຖືໝັ້ນ

ພິຈາລະນາເຫັນ ເວທະນາ ໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າ ມີເວທະນາ ພິຈາລະນາເຫັນເວທະນາໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນເວທະນາ ເວທະນາຂອງເຂົາ ຜັນແປເປັນແນວອື່ນ ຍ້ອນເວທະນາຜັນແປແລະເປັນແນວອື່ນ ວິນຍານຈຶ່ງໝຸນວຽນໄປຕາມຄວາມຜັນແປແຫ່ງເວທະນາ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງເວທະນາ ກໍຄອບງຳຈິດຂອງປຸຖຸຊົນນັ້ນຕັ້ງຢູ່ ຍ້ອນຈິດຖືກຄອບງຳ ປຸຖຸຊົນນັ້ນຈຶ່ງຢ້ານກົວ ລຳບາກໃຈ ຫ່ວງໃຍ ແລະ ສະດຸ້ງຍ້ອນຖືໝັ້ນ

ພິຈາລະນາເຫັນ ສັນຍາ ໂດຍຄວາມເປັນອັດຕາ ຯລຯ

ພິຈາລະນາເຫັນ ສັງຂານ ໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າ ມີສັງຂານ ພິຈາລະນາເຫັນສັງຂານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນສັງຂານ ສັງຂານຂອງເຂົາຜັນແປເປັນແນວອື່ນ ຍ້ອນສັງຂານຜັນແປແລະເປັນແນວອື່ນ ວິນຍານຈຶ່ງໝຸນວຽນໄປຕາມຄວາມຜັນ

ແປແຫ່ງສັງຂານ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງສັງຂານ ກໍຄອບງຳຈິດຂອງປຸຖຸຊົນນັ້ນຕັ້ງຢູ່ ຍ້ອນຈິດຖືກຄອບງຳ ປຸຖຸຊົນນັ້ນຈຶ່ງຢ້ານກົວ ລຳບາກໃຈ ຫ່ວງໃຍ ແລະ ສະດຸ້ງຍ້ອນຖືໝັ້ນ

ພິຈາລະນາເຫັນ ວິນຍານ ໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ ວິນຍານຂອງເຂົາຜັນແປເປັນແນວອື່ນ ຍ້ອນວິນຍານຜັນແປແລະເປັນແນວອື່ນ ວິນຍານຈຶ່ງໝຸນວຽນໄປຕາມຄວາມຜັນແປແຫ່ງວິນຍານ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງວິນຍານ ກໍຄອບງຳຈິດຂອງປຸຖຸຊົນນັ້ນຕັ້ງຢູ່ ຍ້ອນຈິດຖືກຄອບງຳ ປຸຖຸຊົນນັ້ນຈຶ່ງຢ້ານກົວ ລຳບາກໃຈ ຫ່ວງໃຍ ແລະ ສະດຸ້ງຍ້ອນຖືໝັ້ນ

ພິກຂຸທັງຫຼາຍ ຄວາມສະດຸ້ງຍ້ອນຖືໝັ້ນ ເປັນແນວນີ້ແລ

ຄວາມບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ ຮູບຂອງອະຣິຍະສາວົກນັ້ນຜັນແປເປັນແນວອື່ນ ຍ້ອນຮູບຜັນແປແລະເປັນແນວອື່ນ ວິນຍານຈຶ່ງບໍ່ໝຸນວຽນໄປຕາມຄວາມຜັນແປແຫ່ງຮູບ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງຮູບ ກໍບໍ່ຄອບງຳຈິດຂອງອະຣິຍະສາວົກນັ້ນຕັ້ງຢູ່ ຍ້ອນຈິດບໍ່ຖືກຄອບງຳ ອະຣິຍະສາວົກນັ້ນ ຈຶ່ງບໍ່ຢ້ານກົວ ບໍ່ລຳບາກໃຈ ບໍ່ຫ່ວງໃຍ ແລະບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ

ບໍ່ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີເວທະນາ ບໍ່ພິຈາລະນາເຫັນເວທະນາໃນອັດຕາ ບໍພິຈາລະນາເຫັນອັດຕາໃນເວທະນາ ເວທະນາຂອງອະຣິຍະສາວົກນັ້ນຜັນແປເປັນແນວອື່ນ ຍ້ອນເວທະນາຜັນແປແລະເປັນແນວອື່ນ ວິນຍານຈຶ່ງບໍ່ໝຸນວຽນໄປຕາມຄວາມຜັນແປແຫ່ງເວທະນາ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງເວທະນາ ກໍບໍ່ຄອບງຳຈິດຂອງອະຣິຍະສາວົກນັ້ນຕັ້ງຢູ່ ຍ້ອນຈິດບໍ່ຖືກຄອບງຳ ອະຣິຍະສາວົກນັ້ນຈຶ່ງບໍ່ຢ້ານກົວ ບໍ່ລຳບາກໃຈ ບໍ່ຫ່ວງໃຍ ແລະບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ

ບໍ່ພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາ ຯລຯ

ບໍ່ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີສັງຂານ ບໍ່ພິຈາລະນາເຫັນສັງຂານໃນອັດຕາ ບໍພິຈາລະນາເຫັນອັດຕາໃນສັງຂານ ສັງຂານຂອງອະຣິຍະສາວົກນັ້ນຜັນແປເປັນແນວອື່ນ ຍ້ອນສັງຂານຜັນແປແລະເປັນແນວອື່ນ ວິນຍານ ຈຶ່ງບໍ່ໝຸນວຽນໄປຕາມຄວາມຜັນແປແຫ່ງສັງຂານ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງສັງຂານ ກໍບໍ່ຄອບງຳຈິດຂອງອະຣິຍະສາວົກນັ້ນຕັ້ງຢູ່ ຍ້ອນຈິດບໍ່ຖືກຄອບງຳ ອະຣິຍະສາວົກນັ້ນຈຶ່ງບໍ່ຢ້ານກົວ ບໍ່ລຳບາກໃຈ ບໍ່ຫ່ວງໃຍ ແລະ ບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ

ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ ວິນຍານຂອງອະຣິຍະສາວົກນັ້ນຜັນແປເປັນແນວອື່ນ ຍ້ອນວິນຍານຜັນແປແລະເປັນແນວອື່ນ ວິນຍານຈຶ່ງບໍ່ໝຸນວຽນໄປຕາມຄວາມຜັນແປແຫ່ງວິນຍານ ຄວາມສະດຸ້ງແລະຄວາມເກີດຂຶ້ນແຫ່ງທຳທີ່ເກີດຈາກຄວາມໝຸນວຽນໄປຕາມຄວາມຜັນແປແຫ່ງວິນຍານ ກໍບໍ່ຄອບງຳຈິດຂອງອະຣິຍະສາວົກນັ້ນຕັ້ງຢູ່ ຍ້ອນຈິດບໍ່ຖືກຄອບງຳ ອະຣິຍະສາວົກນັ້ນຈຶ່ງບໍ່ຢ້ານກົວ ບໍ່ລຳບາກໃຈ ບໍ່ຫ່ວງໃຍ ແລະບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ

ພິກຂຸທັງຫຼາຍ ຄວາມບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ເປັນແນວນີ້ແລ

**ອຸປາທາປະຣິຕັດສະນາສູດທີ ໗ ຈົບ**

## ໘. ທຸຕິຍະອຸປາທາປະຣິຕັດສະນາສູດ

### ວ່າດ້ວຍຄວາມສະດຸ້ງຍ້ອນຖືໝັ້ນ ສູດທີ ໘

[໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມສະດຸ້ງ ຍ້ອນຖືໝັ້ນ ແລະຄວາມບໍ່ສະດຸ້ງຍ້ອນບໍ່ຖືໝັ້ນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ຄວາມສະດຸ້ງຍ້ອນຖືໝັ້ນ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ພິຈາລະນາເຫັນຮູບວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຮູບຂອງເຂົາຜັນແປເປັນແນວອື່ນ ຍ້ອນຮູບຜັນແປແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນແກ່ເຂົາ

ພິຈາລະນາເຫັນ ເວທະນາ ວ່າ ນັ້ນຂອງເຮົາ ຯລຯ
ພິຈາລະນາເຫັນ ສັນຍາ ວ່າ ນັ້ນຂອງເຮົາ ຯລຯ
ພິຈາລະນາເຫັນ ສັງຂານ ວ່າ ນັ້ນຂອງເຮົາ ຯລຯ

ພິຈາລະນາເຫັນ ວິນຍານ ວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ວິນຍານຂອງເຂົາຜັນແປເປັນແນວອື່ນ ຍ້ອນວິນຍານຜັນແປແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນແກ່ເຂົາ

ພິກຂຸທັງຫຼາຍ ຄວາມສະດຸ້ງຍ້ອນຖືໝັ້ນ ເປັນແນວນີ້ແລ

ຄວາມບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຜູ້ໄດ້ສະດັບ ພິຈາລະນາເຫັນຮູບວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຮູບຂອງອະຣິຍະສາວົກນັ້ນຜັນແປເປັນແນວອື່ນ ຍ້ອນຮູບຜັນແປແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງບໍ່ເກີດຂຶ້ນແກ່ອະຣິຍະສາວົກນັ້ນ

ພິຈາລະນາເຫັນ ເວທະນາ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ສັນຍາ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ
ພິຈາລະນາເຫັນ ສັງຂານ ວ່າ ນັ້ນບໍ່ແມ່ນຂອງເຮົາ ຯລຯ

ພິຈາລະນາເຫັນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເມື່ອວິນຍານຂອງອະຣິຍະສາວົກນັ້ນຜັນແປເປັນແນວອື່ນ ຍ້ອນວິນຍານຜັນແປແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຈຶ່ງບໍ່ເກີດຂຶ້ນແກ່ອະຣິຍະສາວົກນັ້ນ

ພິກຂຸທັງຫຼາຍ ຄວາມບໍ່ສະດຸ້ງຍ້ອນບໍ່ຖືໝັ້ນ ເປັນແນວນີ້ແລ

**ທຸຕິຍະອຸປາທາປະຣິຕັດສະນາສູດທີ ໗ ຈົບ**

## ໘. ກາລັດຕະຍະອະນິດຈະສູດ

### ວ່າດ້ວຍສິ່ງທີ່ບໍ່ທ່ຽງໃນ ໓ ການ

[໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບທີ່ເປັນອະດີດແລະອະນາຄົດ ບໍ່ທ່ຽງ ບໍ່ຕ້ອງກ່າວເຖິງຮູບທີ່ເປັນປັດຈຸບັນເລີຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ອາໄລໃນຮູບທີ່ເປັນອະດີດ ບໍ່ເພີດເພີນຮູບທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບທີ່ເປັນປັດຈຸບັນ

ເວທະນາ ທີ່ເປັນອະດີດແລະອະນາຄົດ ບໍ່ທ່ຽງ ຯລຯ

ສັນຍາ ທີ່ເປັນອະດີດແລະອະນາຄົດ ບໍ່ທ່ຽງ ຯລຯ

ສັງຂານ ທີ່ເປັນອະດີດແລະອະນາຄົດ ບໍ່ທ່ຽງ ບໍ່ຕ້ອງກ່າວເຖິງສັງຂານທີ່ເປັນປັດຈຸບັນເລີຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ອາໄລໃນສັງຂານທີ່ເປັນອະດີດ ບໍ່ເພີດເພີນສັງຂານທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບສັງຂານທີ່ເປັນປັດຈຸບັນ

ວິນຍານທີ່ເປັນອະດີດແລະອະນາຄົດ ບໍ່ທ່ຽງ ບໍ່ຕ້ອງກ່າວເຖິງວິນຍານທີ່ເປັນປັດຈຸບັນເລີຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ອາໄລໃນວິນຍານທີ່ເປັນອະດີດ ບໍ່ເພີດເພີນວິນຍານທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານທີ່ເປັນປັດຈຸບັນ

**ກາລັດຕະຍະອະນິດຈະສູດທີ ໙ ຈົບ**

# ໑໐. ກາລັດຕະຍະທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກໃນ ໓ ການ

[໑໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບທີ່ເປັນອະດີດແລະອະນາຄົດ ເປັນທຸກ ບໍ່ຕ້ອງກ່າວເຖິງຮູບທີ່ເປັນປັດຈຸບັນເລີຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ອາໄລໃນຮູບທີ່ເປັນອະດີດ ບໍ່ເພີດເພີນຮູບທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບທີ່ເປັນປັດຈຸບັນ

ເວທະນາ ທີ່ເປັນອະດີດແລະອະນາຄົດ ເປັນທຸກ ຯລຯ

ສັນຍາ ທີ່ເປັນອະດີດແລະອະນາຄົດ ເປັນທຸກ ຯລຯ

ສັງຂານ ທີ່ເປັນອະດີດແລະອະນາຄົດ ເປັນທຸກ ຯລຯ

ວິນຍານ ທີ່ເປັນອະດີດແລະອະນາຄົດ ເປັນທຸກ ບໍ່ຈຳຕ້ອງກ່າວເຖິງວິນຍານທີ່ເປັນປັດຈຸບັນເລີຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ອາໄລໃນວິນຍານທີ່ເປັນອະດີດ ບໍ່ເພີດເພີນວິນຍານທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານທີ່ເປັນປັດຈຸບັນ

**ກາລັດຕະຍະທຸກຂະສູດທີ ໑໐ ຈົບ**

# ໑໑. ກາລັດຕະຍະອະນັດຕະສູດ

## ວ່າດ້ວຍສິ່ງທີ່ເປັນອະນັດຕາໃນ ໓ ການ

[໑໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບທີ່ເປັນອະດີດແລະອະນາຄົດ ເປັນອະນັດຕາ ບໍ່ຕ້ອງກ່າວເຖິງຮູບທີ່ເປັນປັດຈຸບັນເລີຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ອາໄລໃນຮູບທີ່ເປັນອະດີດ ບໍ່ເພີດເພີນຮູບທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບທີ່ເປັນປັດຈຸບັນ

ເວທະນາ ທີ່ເປັນອະດີດແລະອະນາຄົດ ເປັນອະນັດຕາ ຯລຯ
ສັນຍາ ທີ່ເປັນອະດີດແລະອະນາຄົດ ເປັນອະນັດຕາ ຯລຯ
ສັງຂານ ທີ່ເປັນອະດີດແລະອະນາຄົດ ເປັນອະນັດຕາ ຯລຯ

ວິນຍານ ທີ່ເປັນອະດີດແລະອະນາຄົດ ເປັນອະນັດຕາ ບໍ່ຕ້ອງກ່າວເຖິງວິນຍານທີ່ເປັນປັດຈຸບັນເລີຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ອາໄລໃນວິນຍານທີ່ເປັນອະດີດ ບໍ່ເພີດເພີນວິນຍານທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານທີ່ເປັນປັດຈຸບັນ

**ກາລັດຕະຍະອະນັດຕະສູດທີ ໑໑ ຈົບ**

**ນະກຸລະປິຕຸວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ນະກຸລະປິຕຸສູດ
໒. ທະລິດທິການິສູດ
໓. ສະມາທິສູດ
໔. ອຸປາທາປະຣິຕັດສະນາສູດ
໕. ກາລັດຕະຍະອະນິດຈະສູດ
໖. ເທວະທະຫະສູດ
໗. ທຸຕິຍະທະລິດທິການິສູດ
໘. ປະຕິສັນລານະສູດ
໙. ທຸຕິຍະອຸປາທາປະຣິຕັດສະນາສູດ
໑໐. ກາລັດຕະຍະທຸກຂະສູດ
໑໑. ກາລັດຕະຍະອະນັດຕະສູດ

# ໘. ອະນິດຈະວັກ

## ໝວດວ່າດ້ວຍສິ່ງທີ່ບໍ່ທ່ຽງ

# ໑. ອະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໑໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຢູ່ບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ເວທະນາບໍ່ທ່ຽງ ສັນຍາບໍ່ທ່ຽງ ສັງຂານບໍ່ທ່ຽງ ວິນຍານບໍ່ທ່ຽງ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະນິດຈະສູດທີ ໑ ຈົບ**

# ໘. ທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກ

[໑໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບເປັນທຸກ ເວທະນາເປັນທຸກ ສັນຍາເປັນທຸກ ສັງຂານເປັນທຸກ ວິນຍານເປັນທຸກ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸກຂະສູດທີ ໘ ຈົບ**

# ໗. ອະນັດຕະສູດ

## ວ່າດ້ວຍສິ່ງທີ່ເປັນອະນັດຕາ

[໑໔ ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບເປັນອະນັດຕາ ເວທະນາເປັນອະນັດຕາ ສັນຍາເປັນອະນັດຕາ ສັງຂານເປັນອະນັດຕາ ວິນຍານເປັນອະນັດຕາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະນັດຕະສູດທີ ໗ ຈົບ**

# ໘. ຍະທະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໑໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັນຍາ ບໍ່ທ່ຽງ ຯລຯ<br>
ສັງຂານ ບໍ່ທ່ຽງ ຯລຯ

ວິນຍານ ບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ຍະທະນິດຈະສູດທີ ໔ ຈົບ**

# ໕. ຍັງທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກ

[໑໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບເປັນທຸກ ສິ່ງໃດເປັນທຸກສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ເປັນທຸກ ຯລຯ
ສັນຍາ ເປັນທຸກ ຯລຯ
ສັງຂານ ເປັນທຸກ ຯລຯ

ວິນຍານ ເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ຍັງທຸກຂະສູດທີ ໕ ຈົບ**

# ໖. ຍະທະນັດຕາສູດ

## ວ່າດ້ວຍສິ່ງທີ່ເປັນອະນັດຕາ

[໑໗] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ເປັນອະນັດຕາ ຯລຯ

ສັນຍາ ເປັນອະນັດຕາ ຯລຯ

ສັງຂານ ເປັນອະນັດຕາ ຯລຯ

ວິນຍານເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ໒

**ຍະທະນັດຕາສູດທີ ໖ ຈົບ**

# ໗. ສະເຫຕຸອະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງພ້ອມທັງເຫດປັດໄຈ

[໑໘ ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ແມ່ນເຫດປັດໄຈທີ່ໃຫ້ຮູບເກີດຂຶ້ນກໍບໍ່ທ່ຽງ ແລ້ວຮູບທີ່ເກີດຈາກສິ່ງທີ່ບໍ່ທ່ຽງຢູ່ໄສຈັກທ່ຽງໄດ້ນໍ

ເວທະນາບໍ່ທ່ຽງ ແມ່ນເຫດປັດໄຈທີ່ໃຫ້ເວທະນາເກີດຂຶ້ນກໍບໍ່ທ່ຽງ ແລ້ວເວທະນາທີ່ເກີດຈາກສິ່ງທີ່ບໍ່ທ່ຽງຢູ່ໄສຈັກທ່ຽງໄດ້ນໍ

ສັນຍາບໍ່ທ່ຽງ ຯລຯ

ສັງຂານບໍ່ທ່ຽງ ແມ່ນເຫດປັດໄຈທີ່ໃຫ້ສັງຂານເກີດຂຶ້ນກໍບໍ່ທ່ຽງ ແລ້ວສັງຂານທີ່ເກີດຈາກສິ່ງທີ່ບໍ່ທ່ຽງຢູ່ໄສຈັກທ່ຽງໄດ້ນໍ

ວິນຍານບໍ່ທ່ຽງ ແມ່ນເຫດປັດໄຈທີ່ໃຫ້ວິນຍານເກີດຂຶ້ນກໍບໍ່ທ່ຽງ ແລ້ວວິນຍານທີ່ເກີດຈາກສິ່ງທີ່ບໍ່ທ່ຽງຢູ່ໄສຈັກທ່ຽງໄດ້ນໍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ສະເຫຕຸອະນິດຈະສູດທີ່ ໗ ຈົບ**

# ໘. ສະເຫຕຸທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກພ້ອມທັງເຫດປັດໄຈ

[໑໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບເປັນທຸກ ແມ່ນເຫດປັດໄຈທີ່ໃຫ້ຮູບເກີດຂຶ້ນກໍເປັນທຸກ ແລ້ວຮູບທີ່ເກີດຈາກສິ່ງທີ່ເປັນທຸກຢູ່ໄສຈັກມີສຸກໄດ້ນໍ

ເວທະນາ ເປັນທຸກ ຯລຯ

ສັນຍາ ເປັນທຸກ ຯລຯ

ສັງຂານ ເປັນທຸກ ຯລຯ

ວິນຍານ ເປັນທຸກ ແມ່ນເຫດປັດໄຈທີ່ໃຫ້ວິນຍານເກີດຂຶ້ນກໍເປັນທຸກ ແລ້ວວິນຍານທີ່ເກີດຈາກສິ່ງທີ່ເປັນທຸກຢູ່ໄສຈັກມີສຸກໄດ້ນໍ?

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ສະເຫຕຸທຸກຂະສູດທີ່ ໘ ຈົບ**

# ໙. ສະເຫຕຸອະນັດຕະສູດ

## ວ່າດ້ວຍສິ່ງທີ່ເປັນອະນັດຕາພ້ອມທັງເຫດປັດໄຈ

[໔໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຣູບເປັນອະນັດຕາ ແມ່ນເຫດປັດໄຈທີ່ໃຫ້ຣູບເກີດຂຶ້ນກໍເປັນອະນັດຕາ ແລ້ວຣູບທີ່ເກີດຈາກສິ່ງທີ່ເປັນອະນັດຕາຢູ່ໄສຈັກມີອັດຕາໄດ້ນໍ

ເວທະນາ ເປັນອະນັດຕາ ຯລຯ

ສັນຍາ ເປັນອະນັດຕາ ຯລຯ

ສັງຂານ ເປັນອະນັດຕາ ຯລຯ

ວິນຍານ ເປັນອະນັດຕາ ແມ່ນເຫດປັດໄຈທີ່ໃຫ້ວິນຍານເກີດຂຶ້ນກໍເປັນອະນັດຕາ ແລ້ວວິນຍານທີ່ເກີດຈາກສິ່ງທີ່ເປັນອະນັດຕາຢູ່ໄສຈັກມີອັດຕາໄດ້ນໍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ໔

**ສະເຫຕຸອະນັດຕະສູດທີ ໙ ຈົບ**

# ໑໐. ອານັນທະສູດ

## ວ່າດ້ວຍພຣະອານົນ

[໔໑] ເລື້ອງເກີດຂຶ້ນທີ່ອາຣາມໃນນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມດັບພຣະອົງຕັດຮຽກວ່າ ນິໂຣດ ຄວາມດັບແຫ່ງທໍາເຫຼົ່າໃດ? ພຣະອົງຕັດຮຽກວ່າ ນິໂຣດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ຣູບບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມໝົດໄປເປັນທໍາມະດາ ມີຄວາມເສື່ອມໄປເປັນທໍາມະດາ ມີຄວາມຄາຍອອກເປັນທໍາມະດາ ມີຄວາມດັບໄປເປັນທໍາມະດາ ຄວາມດັບແຫ່ງຣູບນັ້ນ ເຮົາຮຽກວ່າ ນິໂຣດ

ເວທະນາບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມໝົດໄປເປັນທໍາມະດາ ມີຄວາມເສື່ອມໄປເປັນທໍາມະດາ ມີຄວາມຄາຍອອກເປັນທໍາມະດາ ມີຄວາມດັບໄປເປັນທໍາມະດາ ຄວາມດັບແຫ່ງເວທະນານັ້ນ ເຮົາຮຽກວ່າ ນິໂຣດ

ສັນຍາ ບໍ່ທ່ຽງ ຯລຯ

ສັງຂານ ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມໝົດໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ຄວາມດັບແຫ່ງສັງຂານນັ້ນ ເຮົາຮຽກວ່າ ນິໂຣດ

ວິນຍານບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມໝົດໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ຄວາມດັບແຫ່ງວິນຍານນັ້ນ ເຮົາຮຽກວ່າ ນິໂຣດ

**ອານັນທະສູດທີ ໑໐ ຈົບ**

**ອະນິດຈະວັກທີ ໘ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

໑. ອະນິດຈະສູດ
໒. ອະນັດຕະສູດ
໓. ຍັງທຸກຂະສູດ
໔. ສະເຫຕຸອະນິດຈະສູດ
໕. ສະເຫຕຸອະນັດຕະສູດ
໖. ທຸກຂະສູດ
໗. ຍະທະນິດຈະສູດ
໘. ຍະທະນັດຕາສູດ
໙. ສະເຫຕຸທຸກຂະສູດ
໑໐. ອານັນທະສູດ

# ໓. ພາຣະວັກ

## ໝວດວ່າດ້ວຍພາຣະ

## ໑. ພາຣະສູດ

### ວ່າດ້ວຍພາຣະ

[໒໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງພາຣະ ຜູ້ແບກພາຣະ ການຖືພາຣະ ແລະການວາງພາຣະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ພາຣະ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ພາຣະນັ້ນ ໄດ້ແກ່ ອຸປາທານຂັນ (ກອງອັນເປັນທີ່ຕັ້ງແຫ່ງຄວາມຍືດໝັ້ນ) ໕ ປະການ

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ນີ້ຮຽກວ່າ ພາຣະ

ຜູ້ແບກພາຣະ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ຜູ້ແບກພາຣະນັ້ນ ໄດ້ແກ່ ບຸກຄົນຜູ້ມີຊື່ແນວນີ້ ມີໂຄດແນວນີ້

ນີ້ຮຽກວ່າ ຜູ້ແບກພາຣະ

ການຖືພາຣະ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນ ແລະ ຄວາມກຳໜັດມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ໄດ້ແກ່

໑. ກາມຕັນຫາ (ຄວາມທະຍານຢາກໃນກາມ)
໒. ພະວະຕັນຫາ (ຄວາມທະຍານຢາກໃນພົບ)
໓. ວິພະວະຕັນຫາ (ຄວາມທະຍານຢາກໃນວິພົບ)

ນີ້ຮຽກວ່າ ການຖືພາຣະ

ການວາງພາຣະ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ນີ້ຮຽກວ່າ ການວາງພາຣະ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຂັນ ໕ ຄື ພາຣະ ບຸກຄົນຄືຜູ້ແບກພາຣະ
ການຖືພາຣະເປັນທຸກໃນໂລກ ການວາງພາຣະເປັນສຸກໃນໂລກ
ບຸກຄົນວາງພາຣະໜັກໄດ້ແລ້ວ ບໍ່ຖືພາຣະອື່ນໄວ້ອີກ
ຖອນຕັນຫາພ້ອມທັງຮາກ ໝົດຄວາມຢາກ ດັບເຢັນຢູ່ເປັນສຸກ

**ພາຣະສູດທີ ໑ ຈົບ**

# ໒. ປະຣິນຍາສູດ

## ວ່າດ້ວຍການກຳນົດຮູ້

[໒໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນກຳນົດຮູ້ແລະການກຳນົດຮູ້ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ຄວນກຳນົດຮູ້ ເປັນແນວໃດ?

ຄື ຮູບເປັນທຳທີ່ຄວນກຳນົດຮູ້ ເວທະນາເປັນທຳທີ່ຄວນກຳນົດຮູ້ ສັນຍາເປັນທຳທີ່ຄວນກຳນົດຮູ້ ສັງຂານເປັນທຳທີ່ຄວນກຳນົດຮູ້ ວິນຍານເປັນທຳທີ່ຄວນກຳນົດຮູ້

ເຫຼົ່ານີ້ຮຽກວ່າ ທຳທີ່ຄວນກຳນົດຮູ້

ການກຳນົດຮູ້ ເປັນແນວໃດ?

ຄື ຄວາມໝົດຣາຄະ ຄວາມໝົດໂທສະ ຄວາມໝົດໂມຫະ

ນີ້ຮຽກວ່າ ການກຳນົດຮູ້

**ປະຣິນຍາສູດທີ ໘ ຈົບ**

# ໖. ອະພິຊານສູດ

## ວ່າດ້ວຍຜູ້ຮູ້ຍິ່ງ

[໒໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະຮູບ ເປັນຜູ້ບໍ່ຄວນເພື່ອຄວາມໝົດທຸກ

ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະເວທະນາ ເປັນຜູ້ບໍ່ຄວນເພື່ອຄວາມໝົດທຸກ

ບຸກຄົນ ເມື່ອຍັງບໍ່ຮູ້ຍິ່ງ ฯລฯ ສັນຍາ ฯລฯ

ບຸກຄົນ ເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະສັງຂານ ເປັນຜູ້ບໍ່ຄວນເພື່ອຄວາມໝົດທຸກ

ບຸກຄົນ ເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະວິນຍານ ເປັນຜູ້ບໍ່ຄວນເພື່ອຄວາມໝົດທຸກ

ພິກຂຸທັງຫຼາຍ ກໍບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະຮູບໄດ້ ເປັນຜູ້ຄວນເພື່ອຄວາມໝົດທຸກ

ບຸກຄົນເມື່ອຮູ້ຍິ່ງ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ

ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະວິນຍານໄດ້ ເປັນຜູ້ຄວນເພື່ອຄວາມໝົດທຸກ

**ອະພິຊານສູດທີ ໖ ຈົບ**

# ໔. ສັນທະຣາຄະສູດ

## ວ່າດ້ວຍການລະສັນທະຣາຄະ

[໔໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະສັນທະຣາຄະໃນຮູບ ດ້ວຍການລະແບວນີ້ ທ່ານທັງຫຼາຍຈັກລະຮູບນັ້ນໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານທັງຫຼາຍ ຈົ່ງລະສັນທະຣາຄະໃນເວທະນາ ດ້ວຍການລະແບວນີ້ ທ່ານທັງຫຼາຍຈັກລະເວທະນານັ້ນ ໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານທັງຫຼາຍຈົ່ງລະສັນທະຣາຄະໃນສັນຍາ ດ້ວຍການລະແບວນີ້ ທ່ານທັງຫຼາຍຈັກລະສັນຍານັ້ນໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານທັງຫຼາຍ ຈົ່ງລະສັນທະຣາຄະໃນສັງຂານ ດ້ວຍການລະແບວນີ້ ທ່ານທັງຫຼາຍຈັກລະສັງຂານນັ້ນໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານທັງຫຼາຍ ຈົ່ງລະສັນທະຣາຄະໃນວິນຍານ ດ້ວຍການລະແບວນີ້ ທ່ານທັງຫຼາຍຈັກລະວິນຍານນັ້ນໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

**ສັນທະຣາຄະສູດທີ ໔ ຈົບ**

# ໕. ອັດສາທະສູດ

## ວ່າດ້ວຍຄຸນຂອງຂັນ

[໔໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດດັ່ງນີ້ວ່າ ອັນໃດນໍ? ເປັນຄຸນ ອັນໃດນໍ? ເປັນໂທດ ອັນໃດນໍ? ເປັນເຄື່ອງສະບັດອອກຈາກຮູບ

ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກ ເວທະນາ
ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກ ສັນຍາ
ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກ ສັງຂານ
ອັນໃດເປັນຄຸນ ອັນໃດເປັນໂທດ ອັນໃດເປັນເຄື່ອງສະບັດອອກຈາກ ວິນຍານ

ພິກຂຸທັງຫຼາຍ ເຮົານັ້ນ ໄດ້ມີຄວາມຄິດຕໍ່ໄປດັ່ງນີ້ວ່າ ສະພາບທີ່ສຸກໂສມະນັດອາໄສຮູບເກີດຂຶ້ນນີ້ເປັນຄຸນຂອງຮູບ ສະພາບທີ່ຮູບບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງຮູບ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະ ໃນຮູບນີ້ເອງເປັນເຄື່ອງສະບັດອອກຈາກຮູບ

ສະພາບທີ່ສຸກໂສມະນັດອາໄສເວທະນາເກີດຂຶ້ນ ນີ້ເປັນຄຸນຂອງເວທະນາ ສະພາບທີ່ເວທະນາບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງເວທະນາ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

ສະພາບທີ່ສຸກໂສມະນັດອາໄສ ສັນຍາ ເກີດຂຶ້ນ ໆລໆ

ສະພາບທີ່ສຸກໂສມະນັດອາໄສສັງຂານເກີດຂຶ້ນ ນີ້ເປັນຄຸນຂອງສັງຂານ ສະພາບທີ່ສັງຂານບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງສັງຂານ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນສັງຂານ ນີ້ເປັນເຄື່ອງສະບັດອອກຈາກສັງຂານ

ສະພາບທີ່ສຸກໂສມະນັດອາໄສວິນຍານເກີດຂຶ້ນ ນີ້ເປັນຄຸນຂອງວິນຍານ ສະພາບທີ່ວິນຍານບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງວິນຍານ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນວິນຍານ ນີ້ເປັນເຄື່ອງສະບັດອອກຈາກວິນຍານ

ພິກຂຸທັງຫຼາຍ ຕາບໃດ ເຮົາຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງແນວນີ້ ຕາບນັ້ນ ເຮົາກໍຍັງບໍ່ຢັ້ງຢືນວ່າ ເປັນຜູ້ຕັດສະຣູ້ໂດຍຖືກຕ້ອງເຊິ່ງສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ

ແຕ່ເມື່ອໃດເຮົາຮູ້ແຈ້ງຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ເຄື່ອງສະບັດ

ອອກໂດຍຄວາມເປັນເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ ຕາມຄວາມເປັນຈິງ ແນວນີ້ ເມື່ອນັ້ນເຮົາຈຶ່ງຈະຢັ້ງຢືນວ່າ ເປັນຜູ້ຕັດສະຣູ້ໂດຍຖືກຕ້ອງ ເຊິ່ງສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ

ອັນໜຶ່ງ ຍານທັດສະນະ ເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຮີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ອັດສາທະສູດທີ ໕ ຈົບ**

# ໖. ທຸຕິຍະອັດສາທະສູດ

## ວ່າດ້ວຍຄຸນຂອງຂັນ ສູດທີ ໘

[໒໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາໄດ້ທ່ຽວສະແຫວງຫາຄຸນຂອງຮູບໄດ້ພົບຄຸນຂອງຮູບແລ້ວ ຄຸນຂອງຮູບມີປະມານທີ່ໃດ ເຮົາເຫັນຄຸນປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາໂທດຂອງຮູບ ໄດ້ພົບໂທດຂອງຮູບແລ້ວ ໂທດຂອງຮູບມີປະມານທີ່ໃດ ເຮົາເຫັນໂທດປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກຮູບ ໄດ້ພົບເຄື່ອງສະບັດອອກຈາກຮູບແລ້ວ ເຄື່ອງສະບັດອອກຈາກຮູບມີປະມານທີ່ໃດ ເຮົາເຫັນເຄື່ອງສະບັດອອກຈາກຮູບປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ເວທະນາ ຯລຯ
ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ສັນຍາ ຯລຯ
ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ສັງຂານ ຯລຯ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງວິນຍານ ໄດ້ພົບຄຸນຂອງວິນຍານແລ້ວ ຄຸນຂອງວິນຍານມີປະມານທີ່ໃດ ເຮົາເຫັນຄຸນປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາໂທດຂອງວິນຍານ ໄດ້ພົບໂທດຂອງວິນຍານແລ້ວ ໂທດຂອງວິນຍານມີປະມານທີ່ໃດ ເຮົາເຫັນໂທດປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກວິນຍານ ໄດ້ພົບເຄື່ອງສະບັດອອກຈາກວິນຍານແລ້ວ ໂທດຂອງວິນຍານມີປະມານທີ່ໃດ ເຮົາເຫັນໂທດປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ພິກຂຸທັງຫຼາຍ ຕາບໃດ ເຮົາຍັງບໍ່ຮູ້ແຈ້ງຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ ຕາມຄວາມເປັນຈິງ ຯລຯ

ອັນໜຶ່ງ ຍານທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຣິບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ທຸຕິຍະອັດສາທະສູດທີ ໒ ຈົບ**

# ໓. ຕະຕິຍະອັດສາທະສູດ

## ວ່າດ້ວຍຄຸນຂອງຂັນ ສູດທີ ໓

[໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າຄຸນຂອງຮູບຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນຮູບ ແຕ່ຍ້ອນຄຸນຂອງຮູບມີຢູ່ ສັນນັ້ນ ສັດທັງຫຼາຍຈຶ່ງຕິດໃຈໃນຮູບ

ຖ້າໂທດຂອງຮູບຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນຮູບ ແຕ່ຍ້ອນໂທດຂອງຮູບມີຢູ່ ສັນນັ້ນ ສັດທັງຫຼາຍຈຶ່ງເບື່ອໜ່າຍໃນຮູບ

ຖ້າເຄື່ອງສະບັດອອກຈາກຮູບຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງສະບັດອອກຈາກຮູບ ແຕ່ຍ້ອນເຄື່ອງສະບັດອອກຈາກຮູບມີຢູ່ ສັນນັ້ນ ສັດທັງຫຼາຍຈຶ່ງສະບັດອອກຈາກຮູບ

ຖ້າຄຸນຂອງ ເວທະນາ ຈັກບໍ່ມີແລ້ວ ຯລຯ
ຖ້າຄຸນຂອງ ສັນຍາ ຈັກບໍ່ມີແລ້ວ ຯລຯ

ຖ້າຄຸນຂອງ ສັງຂານ ຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນສັງຂານ ແຕ່ຍ້ອນຄຸນຂອງສັງຂານມີຢູ່ ສັນນັ້ນ ສັດທັງຫຼາຍ ຈຶ່ງຕິດໃຈໃນສັງຂານ

ຖ້າໂທດຂອງ ສັງຂານ ຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນສັງຂານ ແຕ່ຍ້ອນໂທດຂອງສັງຂານມີຢູ່ ສັນນັ້ນ ສັດທັງຫຼາຍຈຶ່ງເບື່ອໜ່າຍໃນສັງຂານ

ຖ້າເຄື່ອງສະບັດອອກຈາກ ສັງຂານ ຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງສະບັດອອກຈາກ ສັງຂານ ແຕ່ຍ້ອນເຄື່ອງສະບັດອອກຈາກສັງຂານມີຢູ່ ສະນັ້ນ ສັດທັງຫຼາຍ ຈຶ່ງສະບັດອອກຈາກ ສັງຂານ

ຖ້າຄຸນຂອງ ວິນຍານ ຈັກບໍ່ມີແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງຕິດໃຈໃນວິນຍານ ແຕ່ຍ້ອນ ຄຸນຂອງວິນຍານມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງຕິດໃຈໃນວິນຍານ

ຖ້າໂທດຂອງ ວິນຍານ ຈັກບໍ່ມີແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງເບື່ອໜ່າຍໃນວິນຍານ ແຕ່ ຍ້ອນໂທດຂອງວິນຍານມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງເບື່ອໜ່າຍໃນວິນຍານ

ຖ້າເຄື່ອງສະບັດອອກຈາກ ວິນຍານ ຈັກບໍ່ມີແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງສະບັດອອກຈາກ ວິນຍານ ແຕ່ຍ້ອນເຄື່ອງສະບັດອອກຈາກວິນຍານມີຢູ່ ສະນັ້ນ ສັດທັງຫຼາຍຈຶ່ງສະບັດອອກຈາກ ວິນຍານ

ພິກຂຸທັງຫຼາຍ ຕາບໃດ ສັດທັງຫຼາຍ ຍັງບໍ່ຮູ້ແຈ້ງຄຸນໂດຍຄວາມເປັນຄຸນ ໂທດໂດຍ ຄວາມເປັນໂທດ ແລະ ເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ຕາບນັ້ນ ສັດທັງຫຼາຍຈະອອກໄປ ລຸດໄປ ພົ້ນໄປ ມີໃຈປາສະ ຈາກແດນຢູ່ບໍ່ໄດ້ເລີຍໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງ ສະມະນະພາມ ເທວະດາແລະມະນຸດ ແຕ່ເມື່ອໃດ ສັດທັງຫຼາຍ ຮູ້ແຈ້ງຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອຸປາທານ ຂັນ ໕ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ ສັດທັງຫຼາຍຈຶ່ງອອກໄປ ລຸດໄປ ພົ້ນໄປ ມີໃຈ ປາສະຈາກແດນຢູ່ໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະ ມະນະພາມ ເທວະດາແລະມະນຸດ

**ຕະຕິຍະອັດສາທະສູດທີ ໗ ຈົບ**

## ໘. ອະພິນັນທະນະສູດ

### ວ່າດ້ວຍຄວາມເພີດເພີນຂັນ

[໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຜູ້ທີ່ເພີດເພີນຮູບ ຊື່ວ່າ ເພີດເພີນທຸກ ຜູ້ທີ່ ເພີດເພີນທຸກ ເຮົາກ່າວວ່າ ພົ້ນຈາກທຸກບໍ່ໄດ້

ຜູ້ທີ່ເພີດເພີນ ເວທະນາ ຯລຯ
ຜູ້ທີ່ເພີດເພີນ ສັນຍາ ຯລຯ
ຜູ້ທີ່ເພີດເພີນ ສັງຂານ ຯລຯ

ຜູ້ທີ່ເພີດເພີນ ວິນຍານ ຊື່ວ່າ ເພີດເພີນທຸກ ຜູ້ທີ່ເພີດເພີນທຸກ ເຮົາກ່າວວ່າ ພົ້ນຈາກທຸກບໍ່ໄດ້

ພິກຂຸທັງຫຼາຍ ສ່ວນຜູ້ທີ່ບໍ່ເພີດເພີນຮູບ ຊື່ວ່າ ບໍ່ເພີດເພີນທຸກ ຜູ້ທີ່ບໍ່ເພີດເພີນທຸກ ເຮົາກ່າວວ່າ ພົ້ນຈາກທຸກໄດ້

ຜູ້ທີ່ບໍ່ເພີດເພີນ ເວທະນາ ຯລຯ
ຜູ້ທີ່ບໍ່ເພີດເພີນ ສັນຍາ ຯລຯ
ຜູ້ທີ່ບໍ່ເພີດເພີນ ສັງຂານ ຯລຯ

ຜູ້ທີ່ບໍ່ເພີດເພີນ ວິນຍານ ຊື່ວ່າບໍ່ເພີດເພີນທຸກ ຜູ້ທີ່ບໍ່ເພີດເພີນທຸກ ເຮົາກ່າວວ່າ ພົ້ນຈາກທຸກໄດ້

**ອະພິນັນທະນະສູດທີ ໗ ຈົບ**

# ໘. ອຸບປາທະສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງຂັນ

[໓໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງຮູບ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງເວທະນາ ຯລຯ ແຫ່ງສັນຍາ ຯລຯ ແຫ່ງສັງຂານ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງວິນຍານ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຮູບ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງເວທະນາ ຯລຯ ແຫ່ງສັນຍາ ຯລຯ ແຫ່ງສັງຂານ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງວິນຍານ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ອຸປປາທະສູດທີ ໙ ຈົບ**

## ໑໐. ອະຄະມູລະສູດ

## ວ່າດ້ວຍມູນເຫດແຫ່ງທຸກ

[໓໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຸກ ແລະມູນເຫດແຫ່ງທຸກ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຸກ ເປັນແນວໃດ?

ຄື ທຸກຄືຮູບ ທຸກຄືເວທະນາ ທຸກຄືສັນຍາ ທຸກຄືສັງຂານ ທຸກຄືວິນຍານ

ນີ້ຮຽກວ່າ ທຸກ

ມູນເຫດແຫ່ງທຸກ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ໄດ້ແກ່

໑. ກາມຕັນຫາ
໔. ພະວະຕັນຫາ
໓. ວິພະວະຕັນຫາ

ນີ້ຮຽກວ່າ ມູນເຫດແຫ່ງທຸກ

**ອະຄະມູລະສູດທີ ໑໐ ຈົບ**

# ໑໑. ປະພັງຄຸສູດ

## ວ່າດ້ວຍສິ່ງທີ່ແຕກສະຫຼາຍ

[໑໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງສິ່ງທີ່ແຕກສະຫຼາຍ ແລະ ສິ່ງທີ່ບໍ່ແຕກສະຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອັນໃດນໍ? ເປັນສິ່ງທີ່ແຕກສະຫຼາຍ ແລະ ອັນໃດເປັນສິ່ງທີ່ບໍ່ແຕກສະຫຼາຍ

ຄື ຮູບຈັດເປັນສິ່ງທີ່ແຕກສະຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຮູບນັ້ນ ຈັດເປັນສິ່ງທີ່ບໍ່ແຕກສະຫຼາຍ

ເວທະນາ ຈັດເປັນສິ່ງທີ່ແຕກສະຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງເວທະນານັ້ນ ຈັດເປັນສິ່ງທີ່ບໍ່ແຕກສະຫຼາຍ

ສັນຍາ ຈັດເປັນສິ່ງທີ່ແຕກສະຫຼາຍ ຯລຯ

ສັງຂານ ຈັດເປັນສິ່ງທີ່ແຕກສະຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງສັງຂານເຫຼົ່ານັ້ນ ຈັດເປັນສິ່ງທີ່ບໍ່ແຕກສະຫຼາຍ

ວິນຍານ ຈັດເປັນສິ່ງທີ່ແຕກສະຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງວິນຍານນັ້ນ ຈັດເປັນສິ່ງທີ່ບໍ່ແຕກສະຫຼາຍ

**ປະພັງຄຸສູດທີ ໑໑ ຈົບ**

**ພາຣະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ນະຕຸມຫາກະວັກ

## ໝວດວ່າດ້ວຍສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ

## ໑. ນະຕຸມຫາກະສູດ

### ວ່າດ້ວຍສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ

[໓໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

ກໍອັນໃດນໍ ຊື່ວ່າ ສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ

ຄື ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

ເວທະນາ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະເວທະນານັ້ນ ເວທະນາທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

ສັນຍາ ບໍ່ແມ່ນຂອງທ່ານທັງຫຼາຍ ຯລຯ

ສັງຂານ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສັງຂານນັ້ນ ສັງຂານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

ວິນຍານ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະວິນຍານນັ້ນ ວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

ປຽບຄື ຄົນນຳຫຍ້າ ໄມ້ ງ່າໄມ້ ແລະ ໃບໄມ້ ທີ່ມີຢູ່ໃນເຊຕະວັນນີ້ໄປ ເຜົາ ຫຼື ຈັດການໄປຕາມເລື້ອງ ທ່ານທັງຫຼາຍຈະເພິ່ງມີຄວາມຄິດແນວນີ້ແດ່ບໍວ່າ ຄົນນຳເຮົາທັງຫຼາຍໄປເຜົາ ຫຼື ຈັດການໄປຕາມເລື້ອງ

ບໍ່ມີເລີຍ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຫຍ້າເປັນຕົ້ນນັ້ນ ບໍ່ແມ່ນອັດຕາຫຼືສິ່ງທີ່ເນື່ອງດ້ວຍອັດຕາ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ເວທະນາ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງລະເວທະນານັ້ນ ເວທະນາທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

ສັນຍາ ບໍ່ແມ່ນຂອງທ່ານທັງຫຼາຍ ฯລฯ

ສັງຂານ ບໍ່ແມ່ນຂອງທ່ານທັງຫຼາຍ ฯລฯ

ວິນຍານ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະວິນຍານນັ້ນ ວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

**ນະຕຸມຫາກະສູດທີ ໑ ຈົບ**

# ໘. ທຸຕິຍະນະຕຸມຫາກະສູດ

## ວ່າດ້ວຍສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ ສູດທີ ໘

[໓໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ກໍອັນໃດນໍ ຊື່ວ່າ ສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ

ຄື ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

ເວທະນາ ບໍ່ແມ່ນຂອງທ່ານທັງຫຼາຍ ฯລฯ

ສັນຍາ ບໍ່ແມ່ນຂອງທ່ານທັງຫຼາຍ ฯລฯ

ສັງຂານ ບໍ່ແມ່ນຂອງທ່ານທັງຫຼາຍ ฯລฯ

ວິນຍານ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະວິນຍານນັ້ນ ວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກ

**ທຸຕິຍະນະຕຸມຫາກະສູດທີ ໘ ຈົບ**

# ៩. ອັນຍະຕະຣະພິກຂຸສູດ

## ວ່າດ້ວຍພິກຂຸອົງໜຶ່ງທູນຖາມບັນຫາ

[៩໕] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນຄຸ່ນຄິດເຖິງສິ່ງໃດ ກໍເຖິງການນັບເຂົ້າກັບສິ່ງນັ້ນ ບໍ່ຄຸ່ນຄິດເຖິງສິ່ງໃດ ກໍບໍ່ເຖິງການນັບເຂົ້າກັບສິ່ງນັ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ ພຣະສຸຄົດເຈົ້າຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ໂດຍພິດສະດານໄດ້ແນວໃດ

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າບຸກຄົນຄຸ່ນຄິດເຖິງຮູບ ກໍເຖິງການນັບເຂົ້າກັບຮູບນັ້ນ ຖ້າຄຸ່ນຄິດເຖິງເວທະນາ ຯລຯ ຖ້າຄຸ່ນຄິດເຖິງສັນຍາ ຯລຯ ຖ້າຄຸ່ນຄິດເຖິງສັງຂານ ຯລຯ ຖ້າຄຸ່ນຄິດເຖິງວິນຍານ ກໍເຖິງການນັບເຂົ້າກັບວິນຍານນັ້ນ

ຖ້າບຸກຄົນບໍ່ຄຸ່ນຄິດເຖິງຮູບ ກໍບໍ່ເຖິງການນັບເຂົ້າກັບຮູບນັ້ນ ຖ້າບໍ່ຄຸ່ນຄິດເຖິງເວທະນາ ຯລຯ ຖ້າບໍ່ຄຸ່ນຄິດເຖິງສັນຍາ ຯລຯ ຖ້າບໍ່ຄຸ່ນຄິດເຖິງສັງຂານ ຯລຯ ຖ້າບໍ່ຄຸ່ນຄິດເຖິງວິນຍານ ກໍບໍ່ເຖິງການນັບເຂົ້າກັບວິນຍານນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ໂດຍພິດສະດານໄດ້ຢ່າງນີ້

ດີແລ້ວ ດີແລ້ວ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ໂດຍພິດສະດານໄດ້ດີແລ້ວ ຖ້າບຸກຄົນຄຸ່ນຄິດເຖິງຮູບ ກໍເຖິງການນັບເຂົ້າກັບຮູບນັ້ນ ฯລฯ

ຖ້າບຸກຄົນ ບໍ່ຄຸ່ນຄິດເຖິງຮູບ ກໍບໍ່ເຖິງການນັບເຂົ້າກັບຮູບນັ້ນ ຖ້າບໍ່ຄຸ່ນຄິດເຖິງເວທະນາ ฯລฯ ຖ້າບໍ່ຄຸ່ນຄິດເຖິງສັນຍາ ฯລฯ ຖ້າບໍ່ຄຸ່ນຄິດເຖິງສັງຂານ ฯລฯ ຖ້າບໍ່ຄຸ່ນຄິດເຖິງວິນຍານ ກໍບໍ່ເຖິງການນັບເຂົ້າກັບວິນຍານນັ້ນ

ພິກຂຸ ທ່ານເພິ່ງເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ຄັ້ງນັ້ນ ພິກຂຸນັ້ນຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ລຸກຈາກອາສະນະ ຖວາຍອະພິວາດ ທຳປະທັກຂິນແລ້ວຈາກໄປ

ຕໍ່ມາ ພິກຂຸນັ້ນຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ພິກຂຸນັ້ນ ໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອັນຍະຕະຣະພິກຂຸສູດທີ ໓ ຈົບ**

# ໔. ທຸຕິຍະອັນຍະຕະຣະພິກຂຸສູດ

## ວ່າດ້ວຍພິກຂຸອົງໜຶ່ງທູນຖາມບັນຫາ ສູດທີ ໔

[໓໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ฯລฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນຄຸ່ນຄິດເຖິງສິ່ງໃດ ກໍໝົກມຸ້ນເຖິງສິ່ງນັ້ນ ໝົກມຸ້ນເຖິງສິ່ງໃດ ກໍເຖິງການນັບເຂົ້າກັບສິ່ງນັ້ນ ບໍ່ຄຸ່ນຄິດເຖິງສິ່ງໃດ ກໍບໍ່ໝົກມຸ້ນເຖິງສິ່ງນັ້ນ ບໍ່ໝົກມຸ້ນເຖິງສິ່ງໃດ ກໍບໍ່ເຖິງການນັບເຂົ້າກັບສິ່ງນັ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ ພຣະສຸຄົດເຈົ້າຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ພຣະອົງຜູ້ຈະເລີນ ຖ້າບຸກຄົນຄຸ່ນຄິດເຖິງຮູບ ກໍໝົກມຸ້ນເຖິງຮູບນັ້ນ ໝົກມຸ້ນເຖິງຮູບໃດ ກໍເຖິງການນັບເຂົ້າກັບຮູບນັ້ນ ຖ້າຄຸ່ນຄິດເຖິງເວທະນາ ຯລຯ ຖ້າຄຸ່ນຄິດເຖິງສັນຍາ ຯລຯ ຖ້າຄຸ່ນຄິດເຖິງສັງຂານ ຯລຯ ຖ້າຄຸ່ນຄິດເຖິງວິນຍານ ກໍໝົກມຸ້ນເຖິງວິນຍານນັ້ນ ໝົກມຸ້ນເຖິງວິນຍານໃດ ກໍເຖິງການນັບເຂົ້າກັບວິນຍານນັ້ນ

ຖ້າບຸກຄົນບໍ່ຄຸ່ນຄິດເຖິງຮູບ ກໍບໍ່ໝົກມຸ້ນເຖິງຮູບນັ້ນ ບໍ່ໝົກມຸ້ນເຖິງຮູບໃດ ກໍບໍ່ເຖິງການນັບເຂົ້າກັບຮູບນັ້ນ ຖ້າບໍ່ຄຸ່ນຄິດເຖິງເວທະນາ ຯລຯ ຖ້າບໍ່ຄຸ່ນຄິດເຖິງສັນຍາ ຯລຯ ຖ້າບໍ່ຄຸ່ນຄິດເຖິງສັງຂານ ຯລຯ ຖ້າບໍ່ຄຸ່ນຄິດເຖິງວິນຍານ ກໍບໍ່ໝົກມຸ້ນເຖິງວິນຍານນັ້ນ ບໍ່ໝົກມຸ້ນເຖິງວິນຍານໃດ ກໍບໍ່ເຖິງການນັບເຂົ້າກັບວິນຍານນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກຕັດໄວ້ຫຍໍ້ໂດຍພິດສະດານໄດ້ຢ່າງນີ້

ດີແລ້ວ ດີແລ້ວ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ໂດຍພິດສະດານໄດ້ດີແລ້ວ ຖ້າບຸກຄົນຄຸ່ນຄິດເຖິງຮູບ ກໍໝົກມຸ້ນເຖິງຮູບນັ້ນ ໝົກມຸ້ນເຖິງຮູບໃດ ກໍເຖິງການນັບເຂົ້າກັບຮູບນັ້ນ ຖ້າຄຸ່ນຄິດເຖິງເວທະນາ ຯລຯ ຖ້າຄຸ່ນຄິດເຖິງສັນຍາ ຯລຯ ຖ້າຄຸ່ນຄິດເຖິງສັງຂານ ຯລຯ ຖ້າຄຸ່ນຄິດເຖິງວິນຍານ ກໍໝົກມຸ້ນເຖິງວິນຍານນັ້ນ ໝົກມຸ້ນເຖິງວິນຍານໃດ ກໍເຖິງການນັບເຂົ້າກັບວິນຍານນັ້ນ

ພິກຂຸ ຖ້າບຸກຄົນບໍ່ຄຸ່ນຄິດເຖິງຮູບ ກໍບໍ່ໝົກມຸ້ນເຖິງຮູບນັ້ນ ບໍ່ໝົກມຸ້ນເຖິງຮູບໃດ ກໍບໍ່ເຖິງການນັບເຂົ້າກັບຮູບນັ້ນ ຖ້າບໍ່ຄຸ່ນຄິດເຖິງເວທະນາ ຯລຯ ຖ້າບໍ່ຄຸ່ນຄິດເຖິງສັນຍາ ຯລຯ ຖ້າບໍ່ຄຸ່ນຄິດເຖິງສັງຂານ ຯລຯ ຖ້າບໍ່ຄຸ່ນຄິດເຖິງວິນຍານ ກໍບໍ່ໝົກມຸ້ນເຖິງວິນຍານນັ້ນ ບໍ່ໝົກມຸ້ນເຖິງວິນຍານໃດ ກໍບໍ່ເຖິງການນັບເຂົ້າກັບວິນຍານນັ້ນ

ພິກຂຸ ທ່ານເພິ່ງເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ຯລຯ

ອັນໜຶ່ງ ພິກຂຸນັ້ນ ໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ທຸຕິຍະອັນຍະຕະຣະພິກຂຸສູດທີ ໔ ຈົບ**

# ໕. ອານັນທະສູດ

## ວ່າດ້ວຍພຣະອານົນ

[໘໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ເມື່ອໃນເວລາຄ່ຳ ທ່ານພຣະອານົນອອກຈາກທີ່ຫຼີບຫຼີກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ຖ້າພິກຂຸທັງຫຼາຍ ເພິ່ງຖາມທ່ານແນວນີ້ວ່າ ທ່ານອານົນ ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຜາກົດ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຜາກົດ ທ່ານຖືກຖາມແນວນີ້ຈະເພິ່ງຕອບແນວໃດ?

ທ່ານພຣະອານົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພິກຂຸທັງຫຼາຍ ເພິ່ງຖາມຂ້າພຣະອົງແນວນີ້ວ່າ ທ່ານອານົນ ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຜາກົດ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຖືກຖາມແນວນີ້ ເພິ່ງຕອບແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ຄວາມເກີດຂຶ້ນແຫ່ງຮູບຜາກົດ ຄວາມເສື່ອມໄປແຫ່ງຮູບຜາກົດ ເມື່ອຮູບຕັ້ງຢູ່ ຄວາມຜັນປ່ຽນຜາກົດ ຄວາມເກີດຂຶ້ນແຫ່ງເວທະນາ ຯລຯ ແຫ່ງສັນຍາ ຯລຯ ແຫ່ງສັງຂານ ຯລຯ ຄວາມເກີດຂຶ້ນແຫ່ງວິນຍານຜາກົດ ຄວາມເສື່ອມໄປແຫ່ງວິນຍານຜາກົດ ເມື່ອວິນຍານຕັ້ງຢູ່ ຄວາມຜັນປ່ຽນຜາກົດ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ຜາກົດ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຖືກຖາມແນວນີ້ ເພິ່ງຕອບແນວນີ້

ດີແລ້ວ ດີແລ້ວ ອານົນ ຄວາມເກີດຂຶ້ນແຫ່ງຮູບຜາກົດ ຄວາມເສື່ອມໄປແຫ່ງຮູບຜາກົດ ເມື່ອຮູບຕັ້ງຢູ່ ຄວາມຜັນປ່ຽນຜາກົດ ຄວາມເກີດຂຶ້ນແຫ່ງເວທະນາ ຯລຯ ແຫ່ງສັນຍາ ຯລຯ ແຫ່ງສັງຂານ ຯລຯ ຄວາມເກີດຂຶ້ນແຫ່ງວິນຍານຜາກົດ ຄວາມເສື່ອມໄປແຫ່ງວິນຍານຜາກົດ ເມື່ອວິນຍານຕັ້ງຢູ່ ຄວາມຜັນປ່ຽນຜາກົດ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ຜາກົດ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ອານົນ ທ່ານຖືກຖາມແນວນີ້ ເພິ່ງຕອບແນວນີ້

**ອານັນທະສູດທີ ໕ ຈົບ**

# ໘. ທຸຕິຍະອານັນທະສູດ

## ວ່າດ້ວຍພຣະອານົນ ສູດທີ ໘

[໙໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະອານົນ ຜູ້ນັ່ງຢູ່ບ່ອນທີ່ສົມຄວນດັ່ງນີ້ວ່າ ອານົນ ຖ້າພິກຂຸທັງຫຼາຍ ເພິ່ງຖາມທ່ານແນວນີ້ວ່າ ທ່ານອານົນ ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດແລ້ວ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຜາກົດແລ້ວ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຈັກຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຈັກຜາກົດ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຜາກົດ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ອານົນ ທ່ານຖືກຖາມແນວນີ້ ຈະເພິ່ງຕອບແນວໃດ?

ທ່ານພຣະອານົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພິກຂຸທັງຫຼາຍ ເພິ່ງຖາມຂ້າພຣະອົງແນວນີ້ວ່າ ທ່ານອານົນ ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດແລ້ວ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຜາກົດແລ້ວ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຈັກຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຈັກຜາກົດ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ຄວາມເກີດຂຶ້ນແຫ່ງທຳເຫຼົ່າໃດຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່າໃດຜາກົດ ເມື່ອທຳເຫຼົ່າໃດຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຖືກຖາມແນວນີ້ ເພິ່ງຕອບແນວນີ້ ວ່າ

ທ່ານຜູ້ມີອາຍຸທັງຫຼາຍ ຮູບໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຄວາມເກີດຂຶ້ນແຫ່ງຮູບນັ້ນຜາກົດແລ້ວ ຄວາມເສື່ອມໄປແຫ່ງຮູບນັ້ນຜາກົດແລ້ວ ເມື່ອຮູບນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ເວທະນາໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຄວາມເກີດຂຶ້ນແຫ່ງເວທະນານັ້ນຜາກົດແລ້ວ ຄວາມເສື່ອມໄປແຫ່ງເວທະນານັ້ນຜາກົດແລ້ວ ເມື່ອເວທະນານັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ສັນຍາໃດລ່ວງໄປ ຯລຯ

ສັງຂານເຫຼົ່າໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຄວາມເກີດຂຶ້ນແຫ່ງສັງຂານເຫຼົ່ານັ້ນຜາກົດແລ້ວ ຄວາມເສື່ອມໄປແຫ່ງສັງຂານເຫຼົ່ານັ້ນຜາກົດແລ້ວ ເມື່ອສັງຂານເຫຼົ່ານັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ວິນຍານໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຄວາມເກີດຂຶ້ນແຫ່ງວິນຍານນັ້ນຜາກົດແລ້ວ ຄວາມເສື່ອມໄປແຫ່ງວິນຍານນັ້ນຜາກົດແລ້ວ ເມື່ອວິນຍານນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ທ່ານຜູ້ມີອາຍຸທັງຫຼາຍ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຜາກົດແລ້ວ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ຜາກົດແລ້ວ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ທ່ານຜູ້ມີອາຍຸທັງຫຼາຍ ຮູບໃດຍັງບໍ່ເກີດ ຍັງບໍ່ຜາກົດ ຄວາມເກີດຂຶ້ນແຫ່ງຮູບນັ້ນຈັກຜາກົດ ຄວາມເສື່ອມໄປແຫ່ງຮູບນັ້ນຈັກຜາກົດ ເມື່ອຮູບນັ້ນຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ເວທະນາໃດຍັງບໍ່ເກີດ ຍັງບໍ່ຜາກົດ ຄວາມເກີດຂຶ້ນແຫ່ງເວທະນານັ້ນຈັກຜາກົດ ຄວາມເສື່ອມໄປແຫ່ງເວທະນານັ້ນຈັກຜາກົດ ເມື່ອເວທະນານັ້ນຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ສັນຍາໃດຍັງບໍ່ເກີດ ຯລຯ

ສັງຂານເຫຼົ່າໃດຍັງບໍ່ເກີດ ຍັງບໍ່ຜາກົດ ຄວາມເກີດຂຶ້ນແຫ່ງສັງຂານເຫຼົ່ານັ້ນ ຈັກຜາກົດ ເມື່ອສັງຂານເຫຼົ່ານັ້ນຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ວິນຍານໃດຍັງບໍ່ເກີດ ຍັງບໍ່ຜາກົດ ຄວາມເກີດຂຶ້ນແຫ່ງວິນຍານນັ້ນຈັກຜາກົດ ຄວາມເສື່ອມໄປແຫ່ງວິນຍານນັ້ນຈັກຜາກົດ ເມື່ອວິນຍານນັ້ນຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ທ່ານຜູ້ມີອາຍຸທັງຫຼາຍ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຈັກຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ຈັກຜາກົດ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ທ່ານຜູ້ມີອາຍຸທັງຫຼາຍ ຮູບໃດເກີດແລ້ວ ຜາກົດແລ້ວ ຄວາມເກີດຂຶ້ນແຫ່ງຮູບນັ້ນຜາກົດ ຄວາມເສື່ອມໄປແຫ່ງຮູບນັ້ນຜາກົດ ເມື່ອຮູບນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ເວທະນາໃດເກີດແລ້ວ ຜາກົດແລ້ວ ຯລຯ

ສັນຍາໃດເກີດແລ້ວ ຜາກົດແລ້ວ ຯລຯ

ສັງຂານເຫຼົ່າໃດເກີດແລ້ວ ຜາກົດແລ້ວ ຄວາມເກີດຂຶ້ນແຫ່ງສັງຂານເຫຼົ່ານັ້ນຜາກົດ ຄວາມເສື່ອມໄປແຫ່ງສັງຂານເຫຼົ່ານັ້ນຜາກົດ ເມື່ອສັງຂານເຫຼົ່ານັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ວິນຍານໃດເກີດແລ້ວ ຜາກົດແລ້ວ ຄວາມເກີດຂຶ້ນແຫ່ງວິນຍານນັ້ນຜາກົດ ຄວາມເສື່ອມໄປແຫ່ງວິນຍານນັ້ນຜາກົດ ເມື່ອວິນຍານນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ທ່ານຜູ້ມີອາຍຸທັງຫຼາຍ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ຜາກົດ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຖືກຖາມແນວນີ້ ເພິ່ງຕອບແນວນີ້

ດີແລ້ວ ດີແລ້ວ ອານົນ ຮູບໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຄວາມເກີດຂຶ້ນແຫ່ງຮູບນັ້ນຜາກົດແລ້ວ ຄວາມເສື່ອມໄປແຫ່ງຮູບນັ້ນຜາກົດແລ້ວ ເມື່ອຮູບນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ເວທະນາໃດ ໆລໆ
ສັນຍາໃດ ໆລໆ
ສັງຂານເຫຼົ່າໃດ ໆລໆ

ວິນຍານໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຄວາມເກີດຂຶ້ນແຫ່ງວິນຍານນັ້ນຜາກົດແລ້ວ ຄວາມເສື່ອມໄປແຫ່ງວິນຍານນັ້ນຜາກົດແລ້ວ ເມື່ອວິນຍານນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ອານົນ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຜາກົດແລ້ວ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ຜາກົດແລ້ວ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຜາກົດແລ້ວ

ອານົນ ຮູບໃດຍັງບໍ່ເກີດ ຍັງບໍ່ປາກົດ ຄວາມເກີດຂຶ້ນແຫ່ງຮູບນັ້ນຈັກຜາກົດ ຄວາມເສື່ອມໄປແຫ່ງຮູບນັ້ນຈັກຜາກົດ ເມື່ອຮູບນັ້ນຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ເວທະນາໃດ ໆລໆ
ສັນຍາໃດ ໆລໆ
ສັງຂານເຫຼົ່າໃດ ໆລໆ

ວິນຍານໃດ ຍັງບໍ່ເກີດ ຍັງບໍ່ຜາກົດ ຄວາມເກີດຂຶ້ນແຫ່ງວິນຍານນັ້ນຈັກຜາກົດ ຄວາມເສື່ອມໄປແຫ່ງວິນຍານນັ້ນຈັກຜາກົດ ເມື່ອວິນຍານນັ້ນຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ອານົນ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຈັກຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ຈັກຜາກົດ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຈັກຜາກົດ

ອານົນ ຮູບໃດເກີດແລ້ວ ຜາກົດແລ້ວ ຄວາມເກີດຂຶ້ນແຫ່ງຮູບນັ້ນຜາກົດ ຄວາມເສື່ອມໄປແຫ່ງຮູບຜາກົດ ເມື່ອຮູບນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ເວທະນາໃດເກີດແລ້ວ ຜາກົດແລ້ວ ຯລຯ

ສັນຍາໃດ ຯລຯ

ສັງຂານເຫຼົ່າໃດ ຯລຯ

ວິນຍານໃດເກີດແລ້ວ ຜາກົດແລ້ວ ຄວາມເກີດຂຶ້ນແຫ່ງວິນຍານນັ້ນຜາກົດ ຄວາມເສື່ອມໄປແຫ່ງວິນຍານນັ້ນຜາກົດ ເມື່ອວິນຍານນັ້ນຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ອານົນ ຄວາມເກີດຂຶ້ນແຫ່ງທຳເຫຼົ່ານີ້ຜາກົດ ຄວາມເສື່ອມໄປແຫ່ງທຳເຫຼົ່ານີ້ ຜາກົດ ເມື່ອທຳເຫຼົ່ານີ້ຕັ້ງຢູ່ ຄວາມຜັນປ່ຽນຜາກົດ

ອານົນ ທ່ານຖືກຖາມແນວນີ້ ເພິ່ງຕອບແນວນີ້

**ທຸຕິຍະອານັນທະສູດທີ ໖ ຈົບ**

# ໗. ອະນຸທຳມະສູດ

## ວ່າດ້ວຍຜູ້ມີທຳອັນເໝາະສົມ

[໓໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ຫຼາຍດ້ວຍຄວາມເບື່ອໜ່າຍໃນຮູບ ຫຼາຍດ້ວຍຄວາມເບື່ອໜ່າຍໃນເວທະນາ ຫຼາຍດ້ວຍຄວາມເບື່ອໜ່າຍໃນສັນຍາ ຫຼາຍດ້ວຍຄວາມເບື່ອໜ່າຍໃນສັງຂານ ຫຼາຍດ້ວຍຄວາມເບື່ອໜ່າຍໃນວິນຍານຢູ່ ເມື່ອທ່ານເປັນຜູ້ຫຼາຍດ້ວຍຄວາມເບື່ອໜ່າຍໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເປັນຜູ້ຫຼາຍດ້ວຍຄວາມເບື່ອໜ່າຍໃນວິນຍານຢູ່ ກໍຈະກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ກຳນົດຮູ້ວິນຍານ ທ່ານເມື່ອກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ເມື່ອກຳນົດຮູ້ວິນຍານ ຍ່ອມພົ້ນຈາກຮູບ ຍ່ອມພົ້ນຈາກເວທະນາ ຍ່ອມພົ້ນຈາກສັນຍາ ຍ່ອມພົ້ນຈາກສັງຂານ ຍ່ອມພົ້ນຈາກວິນຍານ ເຮົາກ່າວວ່າ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະ ຍ່ອມພົ້ນຈາກທຸກ

**ອະນຸທຳມະສູດທີ ໗ ຈົບ**

# ໗. ທຸຕິຍະອະນຸທຳມະສູດ

## ວ່າດ້ວຍຜູ້ມີທຳອັນເໝາະສົມ ສູດທີ ໘

[໔໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເພິ່ງເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງໃນວິນຍານຢູ່ ເມື່ອທ່ານພິຈາລະນາເຫັນຄວາມບໍ່ທ່ຽງໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ພິຈາລະນາເຫັນຄວາມບໍ່ທ່ຽງໃນວິນຍານຢູ່ ກໍຈະກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ເມື່ອທ່ານກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ຍ່ອມພົ້ນຈາກຮູບ ຍ່ອມພົ້ນຈາກເວທະນາ ຍ່ອມພົ້ນຈາກສັນຍາ ຍ່ອມພົ້ນຈາກສັງຂານ ຍ່ອມພົ້ນຈາກວິນຍານ ເຮົາກ່າວວ່າ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ແລະ ຍ່ອມພົ້ນຈາກທຸກ

**ທຸຕິຍະອະນຸທຳມະສູດທີ ໗ ຈົບ**

# ໘. ຕະຕິຍະອະນຸທຳມະສູດ

## ວ່າດ້ວຍຜູ້ມີທຳອັນເໝາະສົມ ສູດທີ ໙

[໔໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ພິຈາລະນາເຫັນທຸກໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເພິ່ງເປັນຜູ້ພິຈາລະນາເຫັນທຸກໃນວິນຍານຢູ່ ເມື່ອທ່ານພິຈາລະນາເຫັນທຸກໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ພິຈາລະນາເຫັນທຸກໃນວິນຍານຢູ່ ກໍຈະກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ເມື່ອທ່ານກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ຍ່ອມພົ້ນຈາກຮູບ ຍ່ອມພົ້ນຈາກເວທະນາ ຍ່ອມພົ້ນຈາກສັນຍາ ຍ່ອມພົ້ນຈາກສັງຂານ ຍ່ອມພົ້ນຈາກວິນຍານ ເຮົາກ່າວວ່າ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ແລະ ຍ່ອມພົ້ນຈາກທຸກ

**ຕະຕິຍະອະນຸທຳມະສູດທີ ໘ ຈົບ**

# ໑໐. ຈະຕຸດຖະອະນຸທຳມະສູດ

## ວ່າດ້ວຍຜູ້ມີທຳອັນເໝາະສົມ ສູດທີ ៤

[៤៨] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ພິຈາລະນາເຫັນອະນັດຕາໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເພິ່ງເປັນຜູ້ພິຈາລະນາເຫັນອະນັດຕາໃນວິນຍານຢູ່ ເມື່ອທ່ານພິຈາລະນາເຫັນອະນັດຕາໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານພິຈາລະນາເຫັນອະນັດຕາໃນວິນຍານຢູ່ ກໍຈະກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ເມື່ອທ່ານກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ຍ່ອມພົ້ນຈາກຮູບ ຍ່ອມພົ້ນຈາກເວທະນາ ຍ່ອມພົ້ນຈາກສັນຍາ ຍ່ອມພົ້ນຈາກສັງຂານ ຍ່ອມພົ້ນຈາກວິນຍານ ເຮົາກ່າວວ່າ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະ ຍ່ອມພົ້ນຈາກທຸກ

**ຈະຕຸດຖະອະນຸທຳມະສູດທີ ໑໐ ຈົບ**

**ນະຕຸມຫາກະວັກທີ ៤ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໕. ອັດຕະທີປະວັກ

## ໝວດວ່າດ້ວຍການມີຕົນເປັນເກາະ

# ໑. ອັດຕະທີປະສູດ

## ວ່າດ້ວຍການມີຕົນເປັນເກາະ

[໔໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງ ຈົ່ງມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງເລີຍ

ພິກຂຸ ທັງຫຼາຍ ເມື່ອທ່ານທັງຫຼາຍມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ທ່ານທັງຫຼາຍ ຜູ້ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ຄວນພິຈາລະນາເຖິງກຳເນີດວ່າ ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ເກີດຂຶ້ນແນວໃດ ມີອັນໃດເປັນແດນເກີດ

ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເກີດຂຶ້ນແນວໃດ ມີອັນໃດເປັນແດນເກີດ

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ຮູບຂອງເຂົາຜັນແປເປັນແນວອື່ນ ຍ້ອນຮູບຜັນແປແລະເປັນແນວອື່ນໄປ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນແກ່ເຂົາ

ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີເວທະນາ ພິຈາລະນາເຫັນເວທະນາໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນເວທະນາ ເວທະນາຂອງເຂົາຜັນແປເປັນແນວອື່ນ ຍ້ອນເວທະນາຜັນແປແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນແກ່ເຂົາ

ພິຈາລະນາເຫັນ ສັນຍາ ໂດຍຄວາມເປັນອັດຕາ ຯລຯ

ພິຈາລະນາເຫັນ ສັງຂານ ໂດຍຄວາມເປັນອັດຕາ ຯລຯ

ພິຈາລະນາເຫັນ ວິນຍານ ໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ ວິນຍານຂອງເຂົາຜັນແປເປັນແນວອື່ນ ຍ້ອນວິນຍານຜັນແປແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງເກີດຂຶ້ນແກ່ເຂົາ

ພິກຂຸທັງຫຼາຍ ກໍເມື່ອພິກຂຸຮູ້ວ່າ ຮູບບໍ່ທ່ຽງ ຜັນແປໄປ ຄາຍອອກ ດັບໄປ ເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ຮູບໃນການກ່ອນ ແລະ ຮູບທັງປວງໃນບັດນີ້ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ກໍຈະລະໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໄດ້ ຍ້ອນລະໂສກະເປັນຕົ້ນເຫຼົ່ານັ້ນໄດ້ຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງ ກໍຢູ່ເປັນສຸກ ພິກຂຸຜູ້ຢູ່ເປັນສຸກ ເຮົາກ່າວວ່າ ຜູ້ດັບກິເລດແລ້ວດ້ວຍອົງທຳນັ້ນ

ກໍເມື່ອພິກຂຸຮູ້ວ່າເວທະນາບໍ່ທ່ຽງ ຜັນແປໄປ ຄາຍອອກ ດັບໄປ ເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ເວທະນາໃນການກ່ອນ ແລະ ເວທະນາທັງປວງໃນບັດນີ້ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ກໍຈະລະໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດໄດ້ ຍ້ອນລະໂສກະເປັນຕົ້ນເຫຼົ່ານັ້ນໄດ້ຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງ ກໍຢູ່ເປັນສຸກ ພິກຂຸຜູ້ຢູ່ເປັນສຸກ ເຮົາກ່າວວ່າ ຜູ້ດັບກິເລດແລ້ວດ້ວຍອົງທຳນັ້ນ

ກໍເມື່ອພິກຂຸຮູ້ວ່າ ສັນຍາບໍ່ທ່ຽງ ຯລຯ

ກໍເມື່ອພິກຂຸຮູ້ວ່າ ສັງຂານບໍ່ທ່ຽງ ຜັນແປໄປ ຄາຍອອກ ດັບໄປ ເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ສັງຂານໃນການກ່ອນ ແລະສັງຂານທັງປວງໃນບັດນີ້ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ກໍຈະລະໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດໄດ້ ຍ້ອນລະໂສກະເປັນຕົ້ນເຫຼົ່ານັ້ນໄດ້ຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງ ກໍຢູ່ເປັນສຸກ ພິກຂຸຜູ້ຢູ່ເປັນສຸກ ເຮົາກ່າວວ່າ ຜູ້ດັບກິເລດແລ້ວດ້ວຍອົງທຳນັ້ນ

ກໍເມື່ອພິກຂຸຮູ້ວ່າວິນຍານບໍ່ທ່ຽງ ຜັນແປໄປ ຄາຍອອກ ດັບໄປ ເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ວິນຍານໃນການກ່ອນ ແລະ ວິນຍານທັງປວງໃນບັດນີ້ ລ້ວນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ກໍຈະລະໂສກະ ປະຣິເທວະ ທຸກ ໂທມະນັດແລະອຸປາຍາດໄດ້ ຍ້ອນລະໂສກະເປັນຕົ້ນເຫຼົ່ານັ້ນໄດ້ ຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງ ຍ່ອມຢູ່ເປັນສຸກ ພິກຂຸຜູ້ຢູ່ເປັນສຸກ ເຮົາກ່າວວ່າ ຜູ້ດັບກິເລດແລ້ວດ້ວຍອົງທຳນັ້ນ

**ອັດຕະທີປະສູດທີ ໑ ຈົບ**

# ໘. ປະຕິປະທາສູດ

## ວ່າດ້ວຍປະຕິປະທາ

[໔໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາທີ່ໃຫ້ເຖິງສັກກາຍະສະມຸໄທ (ເຫດເກີດແຫ່ງສັກກາຍະ) ແລະ ປະຕິປະທາທີ່ໃຫ້ເຖິງສັກກາຍະນິໂຣດ (ຄວາມດັບແຫ່ງສັກກາຍະ) ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ປະຕິປະທາທີ່ໃຫ້ເຖິງສັກກາຍະສະມຸໄທ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ

ພິຈາລະນາເຫັນ ເວທະນາ ໂດຍຄວາມເປັນອັດຕາ ฯລฯ
ພິຈາລະນາເຫັນ ສັນຍາ ໂດຍຄວາມເປັນອັດຕາ ฯລฯ
ພິຈາລະນາເຫັນ ສັງຂານ ໂດຍຄວາມເປັນອັດຕາ ฯລฯ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງສັກກາຍະສະມຸໄທ

ຄຳວ່າ ປະຕິປະທາທີ່ໃຫ້ເຖິງສັກກາຍະສະມຸໄທ ດັ່ງກ່າວມານີ້ ເຮົາຮຽກວ່າ ການພິຈາລະນາເຫັນທີ່ໃຫ້ເຖິງທຸກຂະສະມຸໄທ ນີ້ເປັນໃຈຄວາມໃນຂໍ້ນີ້

ປະຕິປະທາທີ່ໃຫ້ເຖິງສັກກາຍະນິໂຣດ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມ

ເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ

ບໍ່ພິຈາລະນາເຫັນ ເວທະນາ ໂດຍຄວາມເປັນອັດຕາ ฯລฯ
ບໍ່ພິຈາລະນາເຫັນ ສັນຍາ ฯລฯ
ບໍ່ພິຈາລະນາເຫັນ ສັງຂານ ฯລฯ
ບໍ່ພິຈາລະນາເຫັນ ວິນຍານ ໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງສັກກາຍະນິໂຣດ
ຄຳວ່າ ປະຕິປະທາທີ່ໃຫ້ເຖິງສັກກາຍະນິໂຣດ ດັ່ງກ່າວມານີ້ ເຮົາຮຽກວ່າ ການພິຈາລະນາເຫັນທີ່ໃຫ້ເຖິງທຸກຂະນິໂຣທະ ນີ້ເປັນໃຈຄວາມໃນຂໍ້ນີ້

**ປະຕິປະທາສູດທີ ໔ ຈົບ**

# ໕. ອະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໔໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເມື່ອເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ ຈິດຍ່ອມຄາຍກຳໜັດ ລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ

ເວທະນາ ບໍ່ທ່ຽງ ฯລฯ
ສັນຍາ ບໍ່ທ່ຽງ ฯລฯ
ສັງຂານ ບໍ່ທ່ຽງ ฯລฯ

ວິນຍານບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເມື່ອເຫັນດ້ວຍປັນຍາ

ອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ ຈິດຍ່ອມຄາຍກຳໜັດ ລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ

ພິກຂຸທັງຫຼາຍ ຖ້າຈິດຂອງພິກຂຸຄາຍກຳໜັດຈາກຣູບທາດ ກໍເປັນຈິດທີ່ລຸດພົ້ນແລ້ວຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

ຖ້າຈິດຂອງພິກຂຸຄາຍກຳໜັດຈາກ ເວທະນາທາດ ຯລຯ
ຖ້າຈິດຂອງພິກຂຸຄາຍກຳໜັດຈາກ ສັນຍາທາດ ຯລຯ
ຖ້າຈິດຂອງພິກຂຸຄາຍກຳໜັດຈາກ ສັງຂານທາດ ຯລຯ

ຖ້າຈິດຂອງພິກຂຸຄາຍກຳໜັດຈາກ ວິນຍານທາດ ກໍເປັນຈິດທີ່ລຸດພົ້ນແລ້ວຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ ຍ້ອນລຸດພົ້ນຈຶ່ງຕັ້ງໝັ້ນ ຍ້ອນຕັ້ງໝັ້ນຈຶ່ງສັນໂດດ ຍ້ອນສັນໂດດຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງຍ່ອມດັບໄປເອງ ພິກຂຸນັ້ນຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະນິດຈະສູດທີ ໑ ຈົບ**

໘. ທຸຕິຍະອະນິດຈະສູດ ວ່າດ້ວຍສິ່ງທີ່ບໍ່ທ່ຽງ ສູດທີ ໘

[໕໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາບໍ່ທ່ຽງ ຯລຯ
ສັນຍາບໍ່ທ່ຽງ ຯລຯ
ສັງຂານບໍ່ທ່ຽງ ຯລຯ

ວິນຍານບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເມື່ອເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ ການຕາມເຫັນສ່ວນເບື້ອງຕົ້ນ (ອະດີດ) ກໍບໍ່ມີ ເມື່ອການຕາມເຫັນສ່ວນເບື້ອງຕົ້ນບໍ່ມີ ການຕາມເຫັນສ່ວນເບື້ອງປາຍ

(ອະນາຄົດ) ກໍບໍ່ມີ ເມື່ອການຕາມເຫັນສ່ວນເບື້ອງປາຍບໍ່ມີ ຄວາມຍຶດໝັ້ນຢ່າງແຮງກ້າກໍບໍ່ມີ ເມື່ອຄວາມຍຶດໝັ້ນຢ່າງແຮງກ້າບໍ່ມີ ຈິດກໍຄາຍກຳໜັດໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຈິດກໍຄາຍກຳໜັດໃນວິນຍານ ລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ ຍ້ອນລຸດພົ້ນຈຶ່ງຕັ້ງໝັ້ນ ຍ້ອນຕັ້ງໝັ້ນຈຶ່ງສັນໂດດ ຍ້ອນສັນໂດດຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງຍ່ອມດັບໄປເອງ ພິກຂຸນັ້ນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸຕິຍະອະນິດຈະສູດທີ ໔ ຈົບ**

# ໕. ສະມະນຸປັດສະນາສູດ

## ວ່າດ້ວຍການພິຈາລະນາເຫັນ

[໔໗] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ເມື່ອພິຈາລະນາ ກໍພິຈາລະນາເຫັນຕົນເປັນໄປຕ່າງ ໆ ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ພິຈາລະນາເຫັນອຸປາທານຂັນ (ກອງອັນເປັນບ່ອນຕັ້ງແຫ່ງຄວາມຍຶດໝັ້ນ) ທັງ ໕ ປະການ ຫຼື ອຸປາທານຂັນປະການໃດປະການໜຶ່ງ

ອຸປາທານຂັນ ໕ ປະການ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ

໑. ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ
໒. ພິຈາລະນາເຫັນເວທະນາ ຯລຯ
໓. ພິຈາລະນາເຫັນສັນຍາ ຯລຯ
໔. ພິຈາລະນາເຫັນສັງຂານ ຯລຯ
໕. ພິຈາລະນາເຫັນວິນຍານ ໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານການພິຈາລະນາເຫັນແນວນີ້ ຈັດວ່າຜູ້ນັ້ນ ຍຶດໝັ້ນຖືໝັ້ນວ່າ ເຮົາເປັນ ເມື່ອຜູ້ນັ້ນຍຶດໝັ້ນຖືໝັ້ນວ່າ ເຮົາເປັນ ຍ່ອມເກີດອິນຊີ ໕ ປະການ ຄື

໑. ຈັກຂຸນຊີ (ອິນຊີຄືຈັກຂຸປະສາດ)
໒. ໂສຕິນຊີ (ອິນຊີຄືໂສຕະປະສາດ)
໓. ຄານິນຊີ (ອິນຊີຄືຄານະປະສາດ)
໔. ຊິວຫິນຊີ (ອິນຊີຄືຊິວຫາປະສາດ)
໕. ກາຍິນຊີ (ອິນຊີຄືກາຍປະສາດ)

ພິກຂຸທັງຫຼາຍ ມະໂນມີຢູ່ ທຳທັງຫຼາຍມີຢູ່ ອະວິດຊາທາດມີຢູ່ ເມື່ອປຸຖຸຊົນຜູ້ບໍ່ໄດ້ສະດັບ ຖືກຄວາມສະເຫວີຍອາລົມ ເຊິ່ງເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ເຂົາກໍມີຄວາມຍຶດໝັ້ນຖື ໝັ້ນວ່າ ເຮົາເປັນແດ່ ເຮົາເປັນນີ້ແດ່ ເຮົາຈັກເປັນແດ່ ເຮົາຈັກບໍ່ເປັນແດ່ ເຮົາຈັກມີຮູບແດ່ ເຮົາຈັກບໍ່ມີຮູບແດ່ ເຮົາຈັກມີສັນຍາແດ່ ເຮົາຈັກບໍ່ມີສັນຍາແດ່ ເຮົາຈັກມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນແດ່

ພິກຂຸທັງຫຼາຍ ກໍອິນຊີ ໕ ປະການ ຕັ້ງຢູ່ໄດ້ຍ້ອນການພິຈາລະນາເຫັນນັ້ນແລ ເມື່ອເປັນແນວນີ້ ອະຣິຍະສາວົກຜູ້ໄດ້ສະດັບ ກໍລະອະວິດຊາໃນອິນຊີເຫຼົ່ານັ້ນ ວິດຊາຈຶ່ງເກີດຂຶ້ນ ຍ້ອນອະວິດຊາຄາຍອອກ ຍ້ອນວິດຊາເກີດຂຶ້ນ ອະຣິຍະສາວົກນັ້ນຈຶ່ງບໍ່ມີຄວາມຍຶດໝັ້ນຖືໝັ້ນວ່າ ເຮົາເປັນແດ່ ເຮົາເປັນນີ້ແດ່ ເຮົາຈັກເປັນແດ່ ເຮົາຈັກບໍ່ເປັນແດ່ ເຮົາຈັກມີຮູບແດ່ ເຮົາຈັກບໍ່ມີຮູບແດ່ ເຮົາຈັກມີສັນຍາແດ່ ເຮົາຈັກບໍ່ມີສັນຍາແດ່ ເຮົາຈັກມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນແດ່

**ສະມະນຸປັດສະນາສູດທີ ໕ ຈົບ**

# ໖. ຂັນທະສູດ

## ວ່າດ້ວຍຂັນ

[໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງຂັນ ໕ ປະການ ແລະອຸປາທານຂັນ ໕ ປະການ ທ່ານທັງຫຼາຍຈົ່ງຟັງ

ຂັນ ໕ ປະການ ອັນໃດແດ່? ຄື

໑. ຮູບ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ນີ້ຮຽກວ່າ ຮູບຂັນ
໒. ເວທະນາແນວໃດແນວໜຶ່ງ ฯລฯ

໓. ສັນຍາ ແນວໃດແນວໜຶ່ງ ຯລຯ
໔. ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ນີ້ຮຽກວ່າ ສັງຂານຂັນ
໕. ວິນຍານ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ນີ້ຮຽກວ່າ ວິນຍານຂັນ

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ຂັນ ໕ ປະການ

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຮູບ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ປະກອບດ້ວຍອາສະວະ ເກື້ອກູນແກ່ອຸປາທານ ນີ້ຮຽກວ່າ ຮູປູປາທານະຂັນ (ອຸປາທານຂັນຄືຮູບ)
໒. ເວທະນາແນວໃດແນວໜຶ່ງ ຯລຯ ໄກຫຼືໃກ້ກໍຕາມ ປະກອບດ້ວຍອາສະວະ ເກື້ອກູນແກ່ອຸປາທານ ນີ້ຮຽກວ່າ ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍາແນວໃດແນວໜຶ່ງ ຯລຯ ໄກຫຼືໃກ້ກໍຕາມ ປະກອບດ້ວຍອາສະວະ ເກື້ອກູນແກ່ອຸປາທານ ນີ້ຮຽກວ່າ ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ ປະກອບດ້ວຍອາສະວະ ເກື້ອກູນແກ່ອຸປາທານ ນີ້ຮຽກວ່າ ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ປະກອບດ້ວຍອາສະວະ ເກື້ອກູນແກ່ອຸປາທານ

ນີ້ຮຽກວ່າ ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ພິກຂຸທັງຫຼາຍ ເຫຼົ່ານີ້ຮຽກວ່າ ອຸປາທານຂັນ ໕ ປະການ

**ຂັນທະສູດທີ ໖ ຈົບ**

# ໗. ໂສນະສູດ

## ວ່າດ້ວຍໂສນະຄະຫະບໍດີບຸດ

[໔໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄື ຄັ້ງນັ້ນ ບຸດຂອງຄະຫະບໍດີຊື່ໂສນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂສນະຄະຫະບໍດີບຸດດັ່ງນີ້ວ່າ ໂສນະກໍສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ພິຈາລະນາເຫັນວ່າ ເຮົາເລີດກວ່າເຂົາ ຫຼື ພິຈາລະນາເຫັນວ່າ ເຮົາສະເໝີເຂົາ ຫຼື ພິຈາລະນາເຫັນວ່າ ເຮົາຕ່ຳຕ້ອຍກວ່າເຂົາ ດ້ວຍຮູບທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ທີ່ເປັນແນວນີ້ບໍ່ແມ່ນອັນໃດ ນອກຈາກການບໍ່ເຫັນຄວາມເປັນຈິງ

ພິຈາລະນາເຫັນວ່າ ເຮົາເລີດກວ່າເຂົາ ຫຼື ພິຈາລະນາເຫັນວ່າ ເຮົາສະເໝີເຂົາ ຫຼື ພິຈາລະນາເຫັນວ່າ ເຮົາຕ່ຳຕ້ອຍກວ່າເຂົາ ດ້ວຍເວທະນາທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ທີ່ເປັນແນວນີ້ບໍ່ແມ່ນອັນໃດ ນອກຈາກການບໍ່ເຫັນຄວາມເປັນຈິງ

ພິຈາລະນາເຫັນວ່າ ຯລຯ ດ້ວຍສັນຍາທີ່ບໍ່ທ່ຽງ ຯລຯ

ພິຈາລະນາເຫັນວ່າ ເຮົາເລີດກວ່າເຂົາ ຫຼື ພິຈາລະນາເຫັນວ່າ ເຮົາສະເໝີເຂົາ ຫຼື ພິຈາລະນາເຫັນວ່າ ເຮົາຕ່ຳຕ້ອຍກວ່າເຂົາ ດ້ວຍສັງຂານທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ທີ່ເປັນແນວນີ້ບໍ່ແມ່ນອັນໃດ ນອກຈາກການບໍ່ເຫັນຄວາມເປັນຈິງ

ພິຈາລະນາເຫັນວ່າ ເຮົາເລີດກວ່າເຂົາ ຫຼື ພິຈາລະນາເຫັນວ່າ ເຮົາສະເໝີເຂົາ ຫຼື ພິຈາລະນາເຫັນວ່າ ເຮົາຕ່ຳຕ້ອຍກວ່າເຂົາ ດ້ວຍວິນຍານທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ທີ່ເປັນແນວນີ້ບໍ່ແມ່ນອັນໃດ ນອກຈາກການບໍ່ເຫັນຄວາມເປັນຈິງ

ໂສນະ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ພິຈາລະນາເຫັນວ່າ ເຮົາເລີດກວ່າເຂົາແດ່ ບໍ່ພິຈາລະນາເຫັນວ່າ ເຮົາສະເໝີເຂົາແດ່ ບໍ່ພິຈາລະນາເຫັນວ່າ ເຮົາຕ່ຳຕ້ອຍກວ່າເຂົາແດ່ ດ້ວຍຮູບທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ທີ່ເປັນແນວນີ້ບໍ່ແມ່ນອັນໃດ ນອກຈາກການເຫັນຄວາມເປັນຈິງ

ບໍ່ພິຈາລະນາເຫັນວ່າ ຯລຯ ດ້ວຍເວທະນາທີ່ບໍ່ທ່ຽງ ຯລຯ
ບໍ່ພິຈາລະນາເຫັນວ່າ ຯລຯ ດ້ວຍສັນຍາທີ່ບໍ່ທ່ຽງ ຯລຯ
ບໍ່ພິຈາລະນາເຫັນວ່າ ຯລຯ ດ້ວຍສັງຂານທີ່ບໍ່ທ່ຽງ ຯລຯ

ບໍ່ພິຈາລະນາເຫັນວ່າ ເຮົາເລີດກວ່າເຂົາແດ່ ບໍ່ພິຈາລະນາເຫັນວ່າ ເຮົາສະເໝີເຂົາແດ່ ບໍ່ພິຈາລະນາເຫັນວ່າ ເຮົາຕໍ່າຕ້ອຍກວ່າເຂົາແດ່ ດ້ວຍວິນຍານທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ທີ່ເປັນແນວນີ້ບໍ່ແມ່ນອັນໃດ ນອກຈາກການເຫັນຄວາມເປັນຈິງ

ໂສນະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ເວທະນາທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ໂສນະ ຍ້ອນເຫດນັ້ນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນທ່ານເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ແນວໃດແນວໜຶ່ງ ຯລຯ

ສັນຍາ ແນວໃດແນວໜຶ່ງ ຯລຯ

ສັງຂານ ແນວໃດແນວໜຶ່ງ ຯລຯ

ວິນຍານ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນ ທ່ານເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ໂສນະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ໂສນະສູດທີ ໗ ຈົບ**

## ໘. ທຸຕິຍະໂສນະສູດ

### ວ່າດ້ວຍໂສນະຄະຫະບໍດີບຸດ ສູດທີ ໘

[໕໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ບຸດຂອງຄະຫະບໍດີຊື່ໂສນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບໂສນະຄະຫະບໍດີບຸດດັ່ງນີ້ ວ່າ

ໂສນະ ກໍສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຮູບ ບໍ່ຮູ້ແຈ້ງຄວາມເກີດຂຶ້ນແຫ່ງຮູບ ບໍ່ຮູ້ແຈ້ງຄວາມດັບແຫ່ງຮູບ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ

ບໍ່ຮູ້ແຈ້ງເວທະນາ ບໍ່ຮູ້ແຈ້ງຄວາມເກີດຂຶ້ນແຫ່ງເວທະນາ ບໍ່ຮູ້ແຈ້ງຄວາມດັບແຫ່ງເວທະນາ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ

ບໍ່ຮູ້ແຈ້ງ ສັນຍາ ຯລຯ

ບໍ່ຮູ້ແຈ້ງ ສັງຂານ ບໍ່ຮູ້ແຈ້ງຄວາມເກີດຂຶ້ນແຫ່ງສັງຂານ ບໍ່ຮູ້ແຈ້ງຄວາມດັບແຫ່ງສັງຂານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

ບໍ່ຮູ້ແຈ້ງ ວິນຍານ ບໍ່ຮູ້ແຈ້ງຄວາມເກີດຂຶ້ນແຫ່ງວິນຍານ ບໍ່ຮູ້ແຈ້ງຄວາມດັບແຫ່ງວິນຍານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ສະມະນະຫຼືພາມເຫຼົ່ານັ້ນ ເຮົາບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະໜະ ຫຼືປະໂຫຍດ

ແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ໂສນະ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຮູບ ຮູ້ແຈ້ງຄວາມເກີດຂຶ້ນແຫ່ງຮູບ ຮູ້ແຈ້ງຄວາມດັບແຫ່ງຮູບ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ

ຮູ້ແຈ້ງ ເວທະນາ ฯลฯ
ຮູ້ແຈ້ງ ສັນຍາ ฯลฯ
ຮູ້ແຈ້ງ ສັງຂານ ฯลฯ

ຮູ້ແຈ້ງ ວິນຍານ ຮູ້ແຈ້ງຄວາມເກີດຂຶ້ນແຫ່ງວິນຍານ ຮູ້ແຈ້ງຄວາມດັບແຫ່ງວິນຍານ ຮູ້ແຈ້ງ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ສະມະນະຫຼືພາມເຫຼົ່ານັ້ນ ເຮົາຈັດວ່າເປັນສະມະນະໃນໝູ່ສະມະນະ ແລະ ຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼືປະໂຫຍດແຫ່ງຄວາມເປັນພາມ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະໂສນະສູດທີ ໘ ຈົບ**

# ໙. ນັນທິກະຂະຍະສູດ

## ວ່າດ້ວຍການໝົດຄວາມເພີດເພີນ

[໕໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫັນຮູບທີ່ບໍ່ທ່ຽງນັ້ນວ່າ ບໍ່ທ່ຽງຄວາມເຫັນນັ້ນຂອງທ່ານເປັນສຳມາທິດຖິ (ເຫັນຖືກ) ເມື່ອທ່ານເຫັນໂດຍຖືກຕ້ອງ ກໍຍ່ອມເບື່ອໜ່າຍ ຍ້ອນໝົດຄວາມເພີດເພີນຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນ ແລະ ຄວາມກຳໜັດ ຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

ພິກຂຸເຫັນເວທະນາທີ່ບໍ່ທ່ຽງນັ້ນວ່າ ບໍ່ທ່ຽງ ຄວາມເຫັນນັ້ນ ຂອງທ່ານເປັນສຳມາທິດຖິ ເມື່ອທ່ານເຫັນໂດຍຖືກຕ້ອງ ກໍຍ່ອມເບື່ອໜ່າຍ ຍ້ອນໝົດຄວາມເພີດເພີນ ຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນ ແລະຄວາມກຳໜັດ ຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

ພິກຂຸເຫັນ ສັນຍາ ທີ່ບໍ່ທ່ຽງນັ້ນວ່າ ບໍ່ທ່ຽງ ฯลฯ

ພິກຂຸເຫັນ ສັງຂານທີ່ບໍ່ທ່ຽງນັ້ນວ່າ ບໍ່ທ່ຽງ ຄວາມເຫັນນັ້ນ ຂອງທ່ານເປັນສຳມາທິດຖິ ເມື່ອທ່ານເຫັນໂດຍຖືກຕ້ອງ ກໍຍ່ອມເບື່ອໜ່າຍ ຍ້ອນໝົດຄວາມເພີດເພີນຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນ ແລະຄວາມກຳໜັດ ຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

ພິກຂຸເຫັນ ວິນຍານ ທີ່ບໍ່ທ່ຽງນັ້ນວ່າ ບໍ່ທ່ຽງ ຄວາມເຫັນຂອງທ່ານນັ້ນເປັນສຳມາທິດຖິ ເມື່ອທ່ານເຫັນໂດຍຖືກຕ້ອງ ກໍຍ່ອມເບື່ອໜ່າຍ ຍ້ອນໝົດຄວາມເພີດເພີນ ຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດ ຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນ ແລະຄວາມກຳໜັດຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

**ນັນທິກະຂະຍະສູດທີ ໗ ຈົບ**

# ໑໐. ທຸຕິຍະນັນທິກະຂະຍະສູດ

## ວ່າດ້ວຍການໝົດຄວາມເພີດເພີນ ສູດທີ ໘

[໕໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມະນະສິການຮູບໂດຍແຍບຄາຍ ແລະ ຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຮູບຕາມຄວາມເປັນຈິງ ເມື່ອພິກຂຸມະນະສິການຮູບໂດຍແຍບຄາຍ ແລະ ພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຮູບຕາມຄວາມເປັນຈິງ ກໍຍ່ອມເບື່ອໜ່າຍໃນຮູບ ຍ້ອນໝົດຄວາມເພີດເພີນ ຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນແລະຄວາມກຳໜັດຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

ທ່ານທັງຫຼາຍ ຈົ່ງມະນະສິການເວທະນາໂດຍແຍບຄາຍ ແລະຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງເວທະນາຕາມຄວາມເປັນຈິງ ເມື່ອພິກຂຸມະນະສິການເວທະນາໂດຍແຍບຄາຍ ແລະພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງເວທະນາຕາມຄວາມເປັນຈິງ ກໍຍ່ອມເບື່ອໜ່າຍໃນເວທະນາ ຍ້ອນໝົດຄວາມເພີດເພີນຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນແລະຄວາມກຳໜັດ ຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

ທ່ານທັງຫຼາຍ ຈົ່ງມະນະສິການສັນຍາໂດຍແຍບຄາຍ ຯລຯ

ທ່ານທັງຫຼາຍ ຈົ່ງມະນະສິການສັງຂານໂດຍແຍບຄາຍ ແລະຈົ່ງພິຈາລະນາເຫັນຄວາມບໍ່

ທ່ຽງ ແຫ່ງສັງຂານຕາມຄວາມເປັນຈິງ ເມື່ອພິກຂຸມະນະສິການສັງຂານໂດຍແຍບຄາຍ ແລະພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງສັງຂານຕາມຄວາມເປັນຈິງ ກໍຍ່ອມເບື່ອໜ່າຍໃນສັງຂານ ຍ້ອນໝົດຄວາມເພີດເພີນຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນແລະຄວາມກຳໜັດ ຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

ທ່ານທັງຫຼາຍ ຈົ່ງມະນະສິການວິນຍານໂດຍແຍບຄາຍ ແລະ ຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງວິນຍານຕາມຄວາມເປັນຈິງ ເມື່ອພິກຂຸມະນະສິການວິນຍານໂດຍແຍບຄາຍ ແລະພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງວິນຍານຕາມຄວາມເປັນຈິງ ກໍຍ່ອມເບື່ອໜ່າຍໃນວິນຍານ ຍ້ອນໝົດຄວາມເພີດເພີນຈຶ່ງໝົດຄວາມກຳໜັດ ຍ້ອນໝົດຄວາມກຳໜັດຈຶ່ງໝົດຄວາມເພີດເພີນ ຍ້ອນໝົດທັງຄວາມເພີດເພີນແລະຄວາມກຳໜັດ ຈິດຈຶ່ງລຸດພົ້ນ ເຮົາຮຽກວ່າ ລຸດພົ້ນດີແລ້ວ

**ທຸຕິຍະນັນທິກະຂະຍະສູດທີ ໑໐ ຈົບ**

**ອັດຕະທີປະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອັດຕະທີປະສູດ
໒. ປະຕິປະທາສູດ
໓. ອະນິດຈະສູດ
໔. ທຸຕິຍະອະນິດຈະສູດ
໕. ສະມະນຸປັດສະນາສູດ
໖. ຂັນທະສູດ
໗. ໂສນະສູດ
໘. ທຸຕິຍະໂສນະສູດ
໙. ນັນທິກະຂະຍະສູດ
໑໐. ທຸຕິຍະນັນທິກະຂະຍະສູດ

**ມູລະປັນນາດ ຈົບບໍລິບູນ**

## ລວມວັກທີ່ມີໃນມູລະປັນນາດນີ້ ຄື

໑. ນະກຸລະປິຕຸວັກ
໒. ອະນິດຈະວັກ
໓. ພາຣະວັກ
໔. ນະຕຸມຫາກະວັກ
໕. ອັດຕະທີປະວັກ

## ລວມ ໕ ວັກ ຮຽກວ່າ ປະຖົມປັນນາດ

# ມັດຊິມະປັນນາດ

## ໑. ອຸປະຍະວັກ

### ໝວດວ່າດ້ວຍຄວາມເຂົ້າເຖິງ

## ໑. ອຸປະຍະສູດ

### ວ່າດ້ວຍຄວາມເຂົ້າເຖິງ

[໕໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເຂົ້າເຖິງ ບໍ່ແມ່ນຄວາມລຸດພົ້ນ ຄວາມບໍ່ເຂົ້າເຖິງ ເປັນຄວາມລຸດພົ້ນ

ພິກຂຸທັງຫຼາຍ ວິນຍານທີ່ເຂົ້າເຖິງຮູບ ເມື່ອຕັ້ງຢູ່ ກໍເພິ່ງມີຮູບເປັນອາລົມ ມີຮູບເປັນທີ່ຕັ້ງ ເຂົ້າໄປເສບສະເໜວິຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

ฯລฯ

ວິນຍານທີ່ເຂົ້າເຖິງສັງຂານ ເມື່ອຕັ້ງຢູ່ ກໍເພິ່ງມີສັງຂານເປັນອາລົມ ມີສັງຂານເປັນບ່ອນຕັ້ງເຂົ້າໄປເສບສະເໜວິຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ຜູ້ໃດເພິ່ງກ່າວແນວນີ້ວ່າ ເຮົາຈັກບັນຍັດການມາ ການໄປ ການຈຸຕິ ການອຸບັດ ຫຼື ຄວາມຈະເລີນງອກງາມໄພບູນແຫ່ງວິນຍານ ເວັ້ນຈາກຮູບ ເວທະນາ ສັນຍາ ສັງຂານ

ພິກຂຸທັງຫຼາຍ ຖ້າຄວາມກຳໜັດໃນຮູບທາດ ພິກຂຸລະໄດ້ແລ້ວ ຍ້ອນລະຄວາມກຳໜັດໄດ້ ອາລົມຈຶ່ງຂາດສູນ ບ່ອນຕັ້ງແຫ່ງວິນຍານກໍບໍ່ມີ

ຖ້າຄວາມກຳໜັດໃນ ເວທະນາທາດ ฯລฯ

ຖ້າຄວາມກຳໜັດໃນ ສັນຍາທາດ ฯລฯ

ຖ້າຄວາມກຳໜັດໃນ ສັງຂານທາດ ฯລฯ

ຖ້າຄວາມກຳໜັດໃນ ວິນຍານທາດ ພິກຂຸລະໄດ້ແລ້ວ ຍ້ອນລະຄວາມກຳໜັດໄດ້ ອາລົມຈຶ່ງຂາດສູນ ບ່ອນຕັ້ງແຫ່ງວິນຍານກໍບໍ່ມີ ວິນຍານທີ່ບໍ່ມີບ່ອນຕັ້ງນັ້ນ ກໍບໍ່ງອກງາມ ບໍ່ປຸງແຕ່ງ

ລຸດພົ້ນໄປ ຍ້ອນລຸດພົ້ນຈຶ່ງຕັ້ງໝັ້ນ ຍ້ອນຕັ້ງໝັ້ນຈຶ່ງສັນໂດດ ຍ້ອນສັນໂດດຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງຍ່ອມດັບໄປເອງ ພິກຂຸນັ້ນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອຸປະຍະສູດທີ ໑ ຈົບ**

# ໘. ພີຊະສູດ

## ວ່າດ້ວຍອຸປະມາດ້ວຍພືດ

[໕໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພືດ ໕ ຊະນິດນີ້ ຄື

໑. ພືດເກີດຈາກເຫງົ້າ
໒. ພືດເກີດຈາກລຳຕົ້ນ
໓. ພືດເກີດຈາກຕາ
໔. ພືດເກີດຈາກຍອດ
໕. ພືດເກີດຈາກເມັດ

ພິກຂຸທັງຫຼາຍ ກໍພືດ ໕ ຊະນິດນີ້ ບໍ່ແຕກຫັກ ບໍ່ເສຍຫາຍ ບໍ່ຖືກລົມແລະແດດທຳລາຍ ມີແກ່ນສານ ຖືກເກັບໄວ້ຢ່າງດີ ແຕ່ບໍ່ມີດິນ ບໍ່ມີນ້ຳ ພືດ ໕ ຊະນິດນີ້ ເພິ່ງເຖິງຄວາມຈະເລີນງອກງາມໄພບູນໄດ້ບໍ?

ພິກຂຸເຫຼົ່ານັ້ນ ຂາບທູນວ່າ ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ກໍພືດ ໕ ຊະນິດນີ້ ບໍ່ແຕກຫັກ ໆລໆ ຖືກເກັບໄວ້ຢ່າງດີ ແລະ ມີດິນ ມີນ້ຳ ພືດ ໕ ຊະນິດນີ້ ເພິ່ງເຖິງຄວາມຈະເລີນງອກງາມໄພບູນໄດ້ບໍ?

ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງເຫັນວິນຍານຖິຕິ ໔ ຄືປະຖະວີທາດ ເພິ່ງເຫັນຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄື ອາໂປທາດ ເພິ່ງເຫັນວິນຍານພ້ອມດ້ວຍອາຫານ ຄື ພືດ ໕ ຊະນິດ

ວິນຍານທີ່ເຂົ້າເຖິງ ຮູບ ເມື່ອຕັ້ງຢູ່ ກໍເພິ່ງມີຮູບເປັນອາລົມ ມີຮູບເປັນບ່ອນຕັ້ງ ເຂົ້າໄປເສບສະເໜວິຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

ວິນຍານທີ່ເຂົ້າເຖິງ ເວທະນາ ເມື່ອຕັ້ງຢູ່ ຯລຯ ເຂົ້າໄປເສບສະເຫວີຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

ວິນຍານທີ່ເຂົ້າເຖິງ ສັນຍາ ຯລຯ

ວິນຍານທີ່ເຂົ້າເຖິງ ສັງຂານ ເມື່ອຕັ້ງຢູ່ ກໍເພິ່ງມີສັງຂານເປັນອາລົມ ມີສັງຂານເປັນບ່ອນຕັ້ງ ເຂົ້າໄປເສບສະເຫວີຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ທີ່ຜູ້ໃດເພິ່ງກ່າວແນວນີ້ວ່າ ເຮົາຈັກບັນຍັດການມາ ການໄປ ການຈຸຕິ ການອຸບັດ ຫຼື ຄວາມຈະເລີນງອກງາມໄພບູນແຫ່ງວິນຍານ ເວັ້ນຈາກຮູບ ເວທະນາ ສັນຍາ ສັງຂານ

ພິກຂຸທັງຫຼາຍ ຖ້າຄວາມກຳໜັດໃນຮູບທາດ ພິກຂຸລະໄດ້ແລ້ວ ຍ້ອນລະຄວາມກຳໜັດໄດ້ ອາລົມຈຶ່ງຂາດສູນ ບ່ອນຕັ້ງແຫ່ງວິນຍານກໍບໍ່ມີ

ຖ້າຄວາມກຳໜັດໃນ ເວທະນາທາດ ຯລຯ

ຖ້າຄວາມກຳໜັດໃນ ສັນຍາທາດ ຯລຯ

ຖ້າຄວາມກຳໜັດໃນ ສັງຂານທາດ ຯລຯ

ຖ້າຄວາມກຳໜັດໃນວິນຍານທາດ ພິກຂຸລະໄດ້ແລ້ວ ຍ້ອນລະຄວາມກຳໜັດໄດ້ ອາລົມຈຶ່ງຂາດສູນ ບ່ອນຕັ້ງແຫ່ງວິນຍານກໍບໍ່ມີ ວິນຍານທີ່ບໍ່ມີບ່ອນຕັ້ງນັ້ນ ກໍບໍ່ງອກງາມ ບໍ່ປຸງແຕ່ງປະຕິສົນທິ ລຸດພົ້ນໄປ ຍ້ອນລຸດພົ້ນຈຶ່ງຕັ້ງໝັ້ນ ຍ້ອນຕັ້ງໝັ້ນຈຶ່ງສັນໂດດ ຍ້ອນສັນໂດດຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງຍ່ອມດັບໄປເອງ ພິກຂຸນັ້ນຮູ້ແຈ້ງວ່າ ຊາດໝົດແລ້ວ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພີຊະສູດທີ່ ໔ ຈົບ**

# ໕. ອຸທານະສູດ

## ວ່າດ້ວຍການເປ່ງອຸທານ

[໕໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຊົງເປ່ງອຸທານວ່າ ພິກຂຸຜູ້ນ້ອມໃຈໄປແນວນີ້ວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າກຳສັງຂານ (ການປຸງແຕ່ງກຳ) ຈັກບໍ່ໄດ້ມີແລ້ວ ປະຕິສົນທິຂອງເຮົາກໍຈັກບໍ່ມີ ເພິ່ງຕັດໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໄດ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍພິກຂຸຜູ້ນ້ອມໃຈໄປແນວນີ້ວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າກໍາສັງຂານຈັກບໍ່ໄດ້ມີແລ້ວ ປະຕິສົນທິຂອງເຮົາກໍຈັກບໍ່ມີ ເພິ່ງຕັດໂອຣໍາພາຄີຍະສັງໂຍດໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ຯລຯ ບໍ່ໄດ້ຮັບການແນະນໍາໃນທໍາຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ

ທ່ານບໍ່ຮູ້ແຈ້ງຮູບທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ຮູບບໍ່ທ່ຽງ ບໍ່ຮູ້ແຈ້ງເວທະນາທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ເວທະນາບໍ່ທ່ຽງ ບໍ່ຮູ້ແຈ້ງສັນຍາທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ສັນຍາບໍ່ທ່ຽງ ບໍ່ຮູ້ແຈ້ງສັງຂານທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ສັງຂານບໍ່ທ່ຽງ ບໍ່ຮູ້ແຈ້ງວິນຍານທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ວິນຍານບໍ່ທ່ຽງ

ທ່ານບໍ່ຮູ້ແຈ້ງຮູບທີ່ເປັນທຸກຕາມຄວາມເປັນຈິງວ່າ ຮູບເປັນທຸກ ຯລຯ ເວທະນາທີ່ເປັນທຸກ ຯລຯ ສັນຍາທີ່ເປັນທຸກ ຯລຯ ສັງຂານທີ່ເປັນທຸກ ຯລຯ ບໍ່ຮູ້ແຈ້ງວິນຍານທີ່ເປັນທຸກຕາມຄວາມເປັນຈິງວ່າ ວິນຍານເປັນທຸກ

ທ່ານບໍ່ຮູ້ແຈ້ງຮູບທີ່ເປັນອະນັດຕາຕາມຄວາມເປັນຈິງວ່າ ຮູບເປັນອະນັດຕາ ຯລຯ ເວທະນາທີ່ ເປັນອະນັດຕາ ຯລຯ ສັນຍາທີ່ເປັນອະນັດຕາ ຯລຯ ສັງຂານທີ່ເປັນອະນັດຕາ ຯລຯ ບໍ່ຮູ້ແຈ້ງວິນຍານ ທີ່ເປັນອະນັດຕາຕາມຄວາມເປັນຈິງວ່າ ວິນຍານເປັນອະນັດຕາ

ທ່ານບໍ່ຮູ້ແຈ້ງຮູບທີ່ຖືກປັດໄຈປຸງແຕ່ງຕາມຄວາມເປັນຈິງວ່າ ຮູບຖືກປັດໄຈປຸງແຕ່ງ ຯລຯ ເວທະນາທີ່ຖືກປັດໄຈປຸງແຕ່ງ ຯລຯ ສັນຍາທີ່ຖືກປັດໄຈປຸງແຕ່ງ ຯລຯ ສັງຂານທີ່ຖືກປັດໄຈປຸງແຕ່ງ ຯລຯ ບໍ່ຮູ້ແຈ້ງວິນຍານທີ່ຖືກປັດໄຈປຸງແຕ່ງຕາມຄວາມເປັນຈິງວ່າ ວິນຍານຖືກປັດໄຈປຸງແຕ່ງ

ທ່ານບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ຮູບຈັກມີ ຯລຯ ເວທະນາຈັກມີ ຯລຯ ສັນຍາຈັກມີ ຯລຯ ສັງຂານຈັກມີ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ວິນຍານຈັກມີ

ພິກຂຸ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທໍາຂອງພຣະ

ອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ฯລฯ ບໍ່ພິຈາລະນາເຫັນເວທະນາ ฯລฯ ບໍ່ພິຈາລະນາເຫັນສັນຍາ ฯລฯ ບໍ່ພິຈາລະນາເຫັນສັງຂານ ฯລฯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ

ທ່ານຮູ້ແຈ້ງຮູບທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ຮູບບໍ່ທ່ຽງ ฯລฯ ເວທະນາບໍ່ທ່ຽງ ฯລฯ ສັນຍາບໍ່ທ່ຽງ ฯລฯ ສັງຂານບໍ່ທ່ຽງ ຮູ້ແຈ້ງວິນຍານທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ວິນຍານບໍ່ທ່ຽງ

ຮູ້ແຈ້ງຮູບທີ່ເປັນທຸກ ฯລฯ ຮູ້ແຈ້ງວິນຍານທີ່ເປັນທຸກ ฯລฯ

ຮູ້ແຈ້ງຮູບທີ່ເປັນອະນັດຕາ ฯລฯ ຮູ້ແຈ້ງວິນຍານທີ່ເປັນອະນັດຕາ ฯລฯ

ຮູ້ແຈ້ງຮູບທີ່ຖືກປັດໄຈປຸງແຕ່ງ ฯລฯ ຮູ້ແຈ້ງວິນຍານທີ່ຖືກປັດໄຈປຸງແຕ່ງຕາມຄວາມເປັນຈິງວ່າ ວິນຍານຖືກປັດໄຈປຸງແຕ່ງ

ຮູ້ແຈ້ງຕາມຄວາມເປັນຈິງວ່າ ຮູບຈັກມີ ฯລฯ ເວທະນາຈັກມີ ฯລฯ ສັນຍາຈັກມີ ฯລฯ ສັງຂານຈັກມີ ຮູ້ແຈ້ງຕາມຄວາມເປັນຈິງວ່າ ວິນຍານຈັກມີ

ຍ້ອນຄວາມບໍ່ມີຮູບ ຍ້ອນຄວາມບໍ່ມີເວທະນາ ຍ້ອນຄວາມບໍ່ມີສັນຍາ ຍ້ອນຄວາມບໍ່ມີສັງຂານ ຍ້ອນຄວາມບໍ່ມີວິນຍານ ພິກຂຸນັ້ນ ເມື່ອນ້ອມໃຈໄປແນວນີ້ວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າກຳສັງຂານຈັກບໍ່ໄດ້ມີແລ້ວ ປະຕິສົນທິຂອງເຮົາກໍຈັກບໍ່ມີ ເພິ່ງຕັດໂອຣຳພາຄິຍະສັງໂຍດໄດ້ແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຜູ້ນ້ອມໃຈໄປແນວນີ້ ເພິ່ງຕັດໂອຣຳພາຄິຍະສັງໂຍດໄດ້ ກໍເມື່ອພິກຂຸຮູ້ ເຫັນແນວໃດ ອາສະວະທັງຫຼາຍຈຶ່ງຈະໝົດໄປຕາມລຳດັບ

ພິກຂຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ຍ່ອມສະດຸ້ງໃນບ່ອນບໍ່ຄວນສະດຸ້ງ ກໍປຸຖຸຊົນຜູ້ບໍ່ໄດ້ສະດັບ ຍ່ອມສະດຸ້ງແນວນີ້ວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າກຳສັງຂານຈັກບໍ່ໄດ້ມີແລ້ວ ປະຕິສົນທິຂອງເຮົາກໍຈັກບໍ່ມີ

ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ບໍ່ສະດຸ້ງໃນບ່ອນບໍ່ຄວນສະດຸ້ງ ກໍອະຣິຍະສາວົກຜູ້ໄດ້ສະດັບ ບໍ່ສະດຸ້ງແນວນີ້ວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າກຳສັງຂານຈັກບໍ່ໄດ້ມີແລ້ວ ປະຕິສົນທິຂອງເຮົາກໍຈັກບໍ່ມີ

ວິນຍານທີ່ເຂົ້າເຖິງ ຮູບ ກໍດີ ເມື່ອຕັ້ງຢູ່ ກໍເພິ່ງມີຮູບເປັນອາລົມ ມີຮູບເປັນບ່ອນຕັ້ງ ເຂົ້າໄປເສບສະເຫວີຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

ວິນຍານທີ່ເຂົ້າເຖິງ ເວທະນາ ກໍດີ ຯລຯ

ວິນຍານທີ່ເຂົ້າເຖິງ ສັນຍາ ກໍດີ ຯລຯ

ວິນຍານທີ່ເຂົ້າເຖິງ ສັງຂານ ກໍດີ ເມື່ອຕັ້ງຢູ່ ກໍເພິ່ງມີສັງຂານເປັນອາລົມ ມີສັງຂານເປັນບ່ອນຕັ້ງ ເຂົ້າໄປເສບສະເພາວິຍຄວາມເພີດເພີນຕັ້ງຢູ່ ເຖິງຄວາມຈະເລີນງອກງາມໄພບູນໄດ້

ພິກຂຸ ເປັນໄປບໍ່ໄດ້ເລີຍ ທີ່ຜູ້ໃດເພິ່ງກ່າວແນວນີ້ວ່າ ເຮົາຈັກບັນຍັດການມາ ການໄປ ການຈຸຕິ ການອຸບັດ ຫຼື ຄວາມຈະເລີນງອກງາມໄພບູນແຫ່ງວິນຍານ ເວັ້ນຈາກຮູບ ເວທະນາ ສັນຍາ ສັງຂານ

ພິກຂຸ ຖ້າຄວາມກຳໜັດໃນຮູບທາດ ພິກຂຸລະໄດ້ແລ້ວ ຍ້ອນລະຄວາມກຳໜັດໄດ້ ອາລົມຈຶ່ງຂາດສູນ

ຖ້າຄວາມກຳໜັດໃນ ເວທະນາທາດ ຯລຯ

ຖ້າຄວາມກຳໜັດໃນ ສັນຍາທາດ ຯລຯ

ຖ້າຄວາມກຳໜັດໃນ ສັງຂານທາດ ຯລຯ

ຖ້າຄວາມກຳໜັດໃນ ວິນຍານທາດ ພິກຂຸລະໄດ້ແລ້ວ ຍ້ອນລະຄວາມກຳໜັດໄດ້ ອາລົມຈຶ່ງຂາດສູນ ບ່ອນຕັ້ງແຫ່ງວິນຍານກໍບໍ່ມີ ວິນຍານທີ່ບໍ່ມີບ່ອນຕັ້ງນັ້ນ ກໍບໍ່ງອກງາມ ບໍ່ປຸງແຕ່ງປະຕິສົນທິ ລຸດພົ້ນໄປ ຍ້ອນລຸດພົ້ນຈຶ່ງຕັ້ງໝັ້ນ ຍ້ອນຕັ້ງໝັ້ນຈຶ່ງສັນໂດດ ຍ້ອນສັນໂດດຈຶ່ງບໍ່ສະດຸ້ງ ເມື່ອບໍ່ສະດຸ້ງຍ່ອມດັບໄປເອງ ພິກຂຸນັ້ນຮູ້ແຈ້ງວ່າ ຊາດໝົດແລ້ວ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸ ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປຕາມລຳດັບ

**ອຸທານະສູດທີ ໓ ຈົບ**

## ໔. ອຸປາທານະປະຣິປະວັດຕະນະສູດ

### ວ່າດ້ວຍອຸປາທານຂັນວຽນຮອບ

[໕໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸປາທານຂັນ ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ຕາບໃດ ເຮົາຍັງບໍ່ຮູ້ແຈ້ງອຸປາທານຂັນ ໕ ປະການນີ້ ໂດຍວຽນຮອບ ໔ ຄັ້ງຕາມຄວາມເປັນຈິງ ຕາບນັ້ນ ເຮົາກໍບໍ່ຢັ້ງຢືນວ່າ ເປັນຜູ້ຕັດສະຮູ້ໂດຍຖືກຕ້ອງເຊິ່ງສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມເທວະດາແລະມະນຸດ ແຕ່ເມື່ອໃດ ເຮົາຮູ້ແຈ້ງອຸປາທານຂັນ ໕ ປະການນີ້ ໂດຍວຽນຮອບ ໔ ຄັ້ງຕາມຄວາມເປັນຈິງ ເມື່ອນັ້ນ ເຮົາຈຶ່ງຈະຢັ້ງຢືນວ່າ ເປັນຜູ້ຕັດສະຮູ້ໂດຍຖືກຕ້ອງເຊິ່ງສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ຯລຯ ເທວະດາແລະມະນຸດວຽນຮອບ ໔ ຄັ້ງເປັນແນວໃດ?

ຄື ເຮົາຮູ້ແຈ້ງຮູບ ຄວາມເກີດຂຶ້ນແຫ່ງຮູບ ຄວາມດັບແຫ່ງຮູບ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ເຮົາຮູ້ແຈ້ງວິນຍານ ຄວາມເກີດຂຶ້ນແຫ່ງວິນຍານ ຄວາມດັບແຫ່ງວິນຍານ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ຮູບ ເປັນແນວໃດ?
ຄື ມະຫາພູຕະຮູບ ໔ ແລະ ຮູບທີ່ອາໄສມະຫາພູຕະຮູບ ໔
ນີ້ຮຽກວ່າ ຮູບ

ຍ້ອນຄວາມເກີດຂຶ້ນແຫ່ງອາຫານ ຄວາມເກີດຂຶ້ນແຫ່ງຮູບຈຶ່ງມີ ຍ້ອນຄວາມດັບແຫ່ງອາຫານ ຄວາມດັບແຫ່ງຮູບຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຮູບ ຄວາມເກີດຂຶ້ນແຫ່ງຮູບ ຄວາມດັບແຫ່ງຮູບ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບແນວນີ້ ແລ້ວປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດ ປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝັ້ນຄົງໃນທຳວິໄນນີ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຮູບ ຄວາມເກີດຂຶ້ນແຫ່ງຮູບ ຄວາມດັບແຫ່ງຮູບ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບແນວນີ້ ເປັນຜູ້ລຸດພົ້ນແລ້ວ ຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບໄປ ຍ້ອນບໍ່ຍຶດໝັ້ນຖືໝັ້ນຮູບ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລຸດພົ້ນດີແລ້ວ

ສະມະນະຫຼືພາມເຫຼົ່າໃດລຸດພົ້ນດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝົດກິເລດໂດຍເດັດຂາດ

ສະມະນະຫຼືພາມເຫຼົ່າໃດ ໝົດກິເລດໂດຍເດັດຂາດ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ເວທະນາ ເປັນແນວໃດ?

ຄື ເວທະນາ ໖ ປະການນີ້ ໄດ້ແກ່

໑. ຈັກຂຸສຳຜັດສະຊາເວທະນາ (ເວທະນາເກີດຈາກຈັກຂຸສຳຜັດ)
໒. ໂສຕະສຳຜັດສະຊາເວທະນາ (ເວທະນາເກີດຈາກໂສຕະສຳຜັດ)
໓. ຄານະສຳຜັດສະຊາເວທະນາ (ເວທະນາເກີດຈາກຄານະສຳຜັດ)
໔. ຊິວຫາສຳຜັດສະຊາເວທະນາ (ເວທະນາເກີດຈາກຊິວຫາສຳຜັດ)
໕. ກາຍະສຳຜັດສະຊາເວທະນາ (ເວທະນາເກີດຈາກກາຍສຳຜັດ)
໖. ມະໂນສຳຜັດສະຊາເວທະນາ (ເວທະນາເກີດຈາກມະໂນສຳຜັດ)

ນີ້ຮຽກວ່າ ເວທະນາ

ຍ້ອນຄວາມເກີດຂຶ້ນແຫ່ງຜັດສະ ຄວາມເກີດຂຶ້ນແຫ່ງເວທະນາຈຶ່ງມີ ຍ້ອນຄວາມດັບແຫ່ງຜັດສະ ຄວາມດັບແຫ່ງເວທະນາຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງເວທະນາ ຄວາມເກີດຂຶ້ນແຫ່ງເວທະນາ ຄວາມດັບແຫ່ງເວທະນາ ແລະ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາແນວນີ້ ແລ້ວປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບເວທະນາ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝັ້ນຄົງໃນທຳວິໄນນີ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງເວທະນາ ຄວາມເກີດຂຶ້ນແຫ່ງເວທະນາ ຄວາມດັບແຫ່ງເວທະນາ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາແນວນີ້ ຯລຯ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ສັນຍາ ເປັນແນວໃດ?

ຄື ສັນຍາ ໖ ປະການນີ້ ໄດ້ແກ່

໑. ຮູບສັນຍາ (ຄວາມໝາຍຮູ້ຮູບ)
໒. ສັດທະສັນຍາ (ຄວາມໝາຍຮູ້ສຽງ)
໓. ຄັນທະສັນຍາ (ຄວາມໝາຍຮູ້ກິ່ນ)
໔. ຣະສະສັນຍາ (ຄວາມໝາຍຮູ້ຣົດ)
໕. ໂຜດຖັບພະສັນຍາ (ຄວາມໝາຍຮູ້ໂຜດຖັບພະ)
໖. ທຳມະສັນຍາ (ຄວາມໝາຍຮູ້ທຳມາຣົມ)

ນີ້ຮຽກວ່າ ສັນຍາ

ຍ້ອນຄວາມເກີດຂຶ້ນແຫ່ງຜັດສະ ຄວາມເກີດຂຶ້ນແຫ່ງສັນຍາຈຶ່ງມີ ຍ້ອນຄວາມດັບແຫ່ງຜັດສະ ຄວາມດັບແຫ່ງສັນຍາຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັນຍາ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງສັນຍາແນວນີ້ ຯລຯ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ສັງຂານ ເປັນແນວໃດ?

ຄື ເຈຕະນາ ໖ ປະການນີ້ ໄດ້ແກ່

໑. ຮູບສັນເຈຕະນາ (ຄວາມຈຳນົງຮູບ)
໒. ສັດທະສັນເຈຕະນາ (ຄວາມຈຳນົງສຽງ)
໓. ຄັນທະສັນເຈຕະນາ (ຄວາມຈຳນົງກິ່ນ)
໔. ຣະສະສັນເຈຕະນາ (ຄວາມຈຳນົງຣົດ)
໕. ໂຜດທັບພະສັນເຈຕະນາ (ຄວາມຈຳນົງໂຜດຖັບພະ)
໖. ທຳມະສັນເຈຕະນາ (ຄວາມຈຳນົງທຳມາຣົມ)

ນີ້ຮຽກວ່າ ສັງຂານ

ຍ້ອນຄວາມເກີດຂຶ້ນແຫ່ງຜັດສະ ຄວາມເກີດຂຶ້ນແຫ່ງສັງຂານຈຶ່ງມີ ຍ້ອນຄວາມດັບແຫ່ງຜັດສະ ຄວາມດັບແຫ່ງສັງຂານຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ຄື

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງສັງຂານ ຄວາມເກີດຂຶ້ນແຫ່ງສັງຂານ ຄວາມດັບແຫ່ງສັງຂານ ແລະ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານແບບນີ້ແລ້ວປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກໍາໜັດ ເພື່ອດັບສັງຂານທັງຫຼາຍ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝັ້ນຄົງໃນທໍາວິໄນນີ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງສັງຂານ ຄວາມເກີດຂຶ້ນແຫ່ງສັງຂານ ຄວາມດັບແຫ່ງສັງຂານ ແລະ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານແບບນີ້ແລ້ວ ເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກໍາໜັດ ຍ້ອນດັບໄປ ບໍ່ຍຶດໝັ້ນຖືໝັ້ນສັງຂານ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າລຸດພົ້ນດີແລ້ວ

ສະມະນະຫຼືພາມເຫຼົ່າໃດລຸດພົ້ນດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝົດກິເລດໂດຍເດັດຂາດ

ສະມະນະຫຼືພາມເຫຼົ່າໃດໝົດກິເລດໂດຍເດັດຂາດ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ວິນຍານ ເປັນແບບໃດ?

ຄື ວິນຍານ ໖ ປະການນີ້ ໄດ້ແກ່

໑. ຈັກຂຸວິນຍານ (ຄວາມຮູ້ອາລົມທາງຕາ)
໒. ໂສຕະວິນຍານ (ຄວາມຮູ້ອາລົມທາງຫູ)
໓. ຄານະວິນຍານ (ຄວາມຮູ້ອາລົມທາງດັງ)
໔. ຊິວຫາວິນຍານ (ຄວາມຮູ້ອາລົມທາງລີ້ນ)
໕. ກາຍະວິນຍານ (ຄວາມຮູ້ອາລົມທາງກາຍ)
໖. ມະໂນວິນຍານ (ຄວາມຮູ້ອາລົມທາງໃຈ)

ນີ້ຮຽກວ່າ ວິນຍານ

ຍ້ອນຄວາມເກີດຂຶ້ນແຫ່ງນາມຮູບ ຄວາມເກີດຂຶ້ນແຫ່ງວິນຍານຈຶ່ງມີ ຍ້ອນຄວາມດັບແຫ່ງນາມຮູບ ຄວາມດັບແຫ່ງວິນຍານຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງວິນຍານ ຄວາມເກີດຂຶ້ນແຫ່ງວິນຍານ ຄວາມດັບແຫ່ງວິນຍານ ແລະ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານແນວນີ້ແລ້ວ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝັ້ນຄົງໃນທຳວິໄນນີ້

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງວິນຍານ ຄວາມເກີດຂຶ້ນແຫ່ງວິນຍານ ຄວາມດັບແຫ່ງວິນຍານ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານແນວນີ້ແລ້ວເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບໄປ ບໍ່ຍຶດໝັ້ນຖືໝັ້ນ ວິນຍານ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າລຸດພົ້ນດີແລ້ວ

ສະມະນະຫຼືພາມເຫຼົ່າໃດລຸດພົ້ນດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝົດກິເລດໂດຍເດັດຂາດ

ສະມະນະຫຼືພາມເຫຼົ່າໃດໝົດກິເລດໂດຍເດັດຂາດ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

**ອຸປາທານະປະຣິປະວັດຕະນະສູດທີ ໔ ຈົບ**

# ໕. ສັດຕັດຖານະສູດ

## ວ່າດ້ວຍຖານະ ໗ ປະການ

[໕໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິ

ກະເສດຖີ ເຂດນະຄອນສາວັດຖີ ຢູ່ບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ພິກຂຸຜູ້ສະຫຼາດໃນຖານະ ໗ ປະການ ຜູ້ເພ່ງພິນິດໂດຍວິທີ ໓ ວິທີ ເຮົາຮຽກວ່າ ອຸດົມບຸຣຸດ ຜູ້ໝົດກິເລດໂດຍເດັດຂາດ ຢູ່ຈົບພົມມະຈັນໃນທຳວິໄນນີ້

ພິກຂຸຜູ້ສະຫຼາດໃນຖານະ ໗ ປະການ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຮູ້ແຈ້ງຮູບ ຄວາມເກີດຂຶ້ນແຫ່ງຮູບ ຄວາມດັບແຫ່ງຮູບ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຄຸນແຫ່ງຮູບ ໂທດແຫ່ງຮູບ ແລະເຄື່ອງສະບັດອອກຈາກຮູບ
໒. ຮູ້ແຈ້ງເວທະນາ ฯລฯ
໓. ຮູ້ແຈ້ງສັນຍາ ฯລฯ
໔. ຮູ້ແຈ້ງສັງຂານ ฯລฯ
໕. ຮູ້ແຈ້ງວິນຍານ ຄວາມເກີດຂຶ້ນແຫ່ງວິນຍານ ຄວາມດັບແຫ່ງວິນຍານ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ຄຸນແຫ່ງວິນຍານ ໂທດແຫ່ງວິນຍານ ແລະເຄື່ອງສະບັດອອກຈາກວິນຍານ

ຮູບ ເປັນແນວໃດ?

ຄື ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔

ນີ້ຮຽກວ່າ ຮູບ

ຍ້ອນຄວາມເກີດຂຶ້ນແຫ່ງອາຫານ ຄວາມເກີດຂຶ້ນແຫ່ງຮູບຈຶ່ງມີ ຍ້ອນຄວາມດັບແຫ່ງອາຫານ ຄວາມດັບແຫ່ງຮູບຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຄື

໑. ສຳມາທິດຖິ ฯລฯ ໘. ສຳມາສະມາທິ

ສະພາບທີ່ສຸກໂສມະນັດອາໄສຮູບເກີດຂຶ້ນ ນີ້ເປັນຄຸນຂອງຮູບ ສະພາບທີ່ຮູບບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງຮູບ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນຮູບ ນີ້ເປັນເຄື່ອງສະບັດອອກຈາກຮູບ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຮູບ ຄວາມເກີດຂຶ້ນແຫ່ງຮູບ ຄວາມດັບແຫ່ງຮູບ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຄຸນແຫ່ງຮູບ ໂທດແຫ່ງຮູບ ແລະເຄື່ອງສະບັດອອກ ຈາກຮູບແນວນີ້ແລ້ວປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບ ສະມະນະຫຼື ພາມເຫຼົ່ານັ້ນຊື່ວ່າປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝັ້ນຄົງໃນທຳ ວິໄນນີ້

ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຮູບ ຄວາມເກີດຂຶ້ນແຫ່ງຮູບ ຄວາມດັບແຫ່ງ ຮູບ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຄຸນແຫ່ງຮູບ ໂທດແຫ່ງຮູບ ແລະເຄື່ອງສະບັດ ອອກຈາກຮູບແນວນີ້ແລ້ວເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບໄປ ຍ້ອນບໍ່ຖືໝັ້ນຮູບ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລຸດພົ້ນດີແລ້ວ

ສະມະນະຫຼືພາມເຫຼົ່າໃດລຸດພົ້ນດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝົດກິເລດໂດຍ ເດັດຂາດ

ສະມະນະຫຼືພາມເຫຼົ່າໃດໝົດກິເລດໂດຍເດັດຂາດ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດ ຕະເພື່ອຄວາມຜາກົດອີກ

ເວທະນາ ເປັນແນວໃດ?

ຄື ເວທະນາ ໖ ປະການນີ້ ໄດ້ແກ່

໑. ຈັກຂຸສຳຜັດສະຊາເວທະນາ

ຯລຯ

໖. ມະໂນສຳຜັດສະຊາເວທະນາ

ນີ້ຮຽກວ່າ ເວທະນາ

ຍ້ອນຄວາມເກີດຂຶ້ນແຫ່ງຜັດສະ ຄວາມເກີດຂຶ້ນແຫ່ງເວທະນາຈຶ່ງມີ ຍ້ອນຄວາມດັບແຫ່ງ ຜັດສະ ຄວາມດັບແຫ່ງເວທະນາຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ສະພາບທີ່ສຸກໂສມະນັດອາໄສເວທະນາເກີດຂຶ້ນ ນີ້ເປັນຄຸນແຫ່ງເວທະນາ ສະພາບທີ່ເວ

ທະນາບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດແຫ່ງເວທະນາ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງເວທະນາ ຄວາມເກີດຂຶ້ນແຫ່ງເວທະນາ ຄວາມດັບແຫ່ງເວທະນາ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຄຸນແຫ່ງເວທະນາ ໂທດແຫ່ງເວທະນາ ແລະເຄື່ອງສະບັດອອກຈາກເວທະນາແນວນີ້ແລ້ວ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບເວທະນາ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝັ້ນຄົງໃນທຳວິໄນນີ້

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງເວທະນາ ຯລຯ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ສັນຍາ ເປັນແນວໃດ?

ຄື ສັນຍາ ໖ ປະການນີ້ ໄດ້ແກ່

໑. ຮູບສັນຍາ
໒. ສັດທະສັນຍາ
໓. ຄັນທະສັນຍາ
໔. ຣະສະສັນຍາ
໕. ໂຜດຖັບພະສັນຍາ
໖. ທຳມະສັນຍາ

ນີ້ຮຽກວ່າ ສັນຍາ

ຍ້ອນຄວາມເກີດຂຶ້ນແຫ່ງຜັດສະ ຄວາມເກີດຂຶ້ນແຫ່ງສັນຍາຈຶ່ງມີ ຍ້ອນຄວາມດັບແຫ່ງຜັດສະ ຄວາມດັບແຫ່ງສັນຍາຈຶ່ງມີ

ອະຣິຍະມັກມີອົງ ໘ ນີ້ແລ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັນຍາ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ຯລຯ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ສັງຂານ ເປັນແນວໃດ?

ຄື ເຈຕະນາ ໖ ປະການນີ້ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໗. ສໍາມາສະມາທິ

ນີ້ຮຽກວ່າ ສັງຂານ

ຍ້ອນຄວາມເກີດຂຶ້ນແຫ່ງຜັດສະ ຄວາມເກີດຂຶ້ນແຫ່ງສັງຂານຈຶ່ງມີ ຍ້ອນຄວາມດັບແຫ່ງຜັດສະ ຄວາມດັບແຫ່ງສັງຂານຈຶ່ງມີ

ອະຣິຍະມັກມີອົງ ໗ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ຄື

໑. ສໍາມາທິດຖິ ຯລຯ ໗. ສໍາມາສະມາທິ

ສະພາບທີ່ສຸກໂສມະນັດອາໄສສັງຂານເກີດຂຶ້ນ ນີ້ເປັນຄຸນແຫ່ງສັງຂານ ສະພາບທີ່ສັງຂານບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ນີ້ເປັນໂທດແຫ່ງສັງຂານ ທໍາເປັນທີ່ກໍາຈັດສັນທະຣາຄະ ທໍາເປັນທີ່ລະສັນທະຣາຄະໃນສັງຂານທັງຫຼາຍ ນີ້ເປັນເຄື່ອງສະບັດອອກຈາກສັງຂານ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງສັງຂານ ຄວາມເກີດຂຶ້ນແຫ່ງສັງຂານ ຄວາມດັບແຫ່ງສັງຂານ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ຯລຯ ປະຕິບັດເພື່ອຄວາມເບື່ອໜ່າຍເພື່ອຄາຍກໍາໜັດ ເພື່ອດັບສັງຂານ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າໝັ້ນຄົງໃນທໍາວິໄນນີ້ ຯລຯ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ວິນຍານ ເປັນແນວໃດ?

ຄື ວິນຍານ ໖ ປະການນີ້ ໄດ້ແກ່

໑. ຈັກຂຸວິນຍານ ໒. ໂສຕະວິນຍານ
໓. ຄານະວິນຍານ ໔. ຊິວຫາວິນຍານ
໕. ກາຍະວິນຍານ ໖. ມະໂນວິນຍານ

ນີ້ຮຽກວ່າ ວິນຍານ

ຍ້ອນຄວາມເກີດຂຶ້ນແຫ່ງນາມຮູບ ຄວາມເກີດຂຶ້ນແຫ່ງວິນຍານຈຶ່ງມີ ຍ້ອນຄວາມດັບແຫ່ງນາມຮູບ ຄວາມດັບແຫ່ງວິນຍານຈຶ່ງມີ

ອະຣິຍະມັກມີອົງ ໗ ນີ້ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ຄື

໑. ສຳມາທິດຖິ ໗ລ໗ ໗. ສຳມາສະມາທິ

ສະພາບທີ່ສຸກໂສມະນັດອາໄສວິນຍານເກີດຂຶ້ນ ນີ້ເປັນຄຸນແຫ່ງວິນຍານ ສະພາບທີ່ວິນຍານບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດແຫ່ງວິນຍານ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນວິນຍານ ນີ້ເປັນເຄື່ອງສະບັດອອກຈາກວິນຍານ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງວິນຍານ ຄວາມເກີດຂຶ້ນແຫ່ງວິນຍານ ຄວາມດັບແຫ່ງວິນຍານ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ຄຸນແຫ່ງວິນຍານ ໂທດແຫ່ງວິນຍານ ເຄື່ອງສະບັດອອກຈາກວິນຍານແນວນີ້ແລ້ວປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ປະຕິບັດດີແລ້ວ

ສະມະນະຫຼືພາມເຫຼົ່າໃດປະຕິບັດດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝັ້ນຄົງໃນທຳວິໄນນີ້

ສ່ວນສະມະນະຫຼືພາມເຫຼົ່າໃດຮູ້ແຈ້ງວິນຍານ ຄວາມເກີດຂຶ້ນແຫ່ງວິນຍານ ຄວາມດັບແຫ່ງວິນຍານ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ຄຸນແຫ່ງວິນຍານ ໂທດແຫ່ງວິນຍານ ແລະເຄື່ອງສະບັດອອກຈາກວິນຍານແນວນີ້ແລ້ວເປັນຜູ້ລຸດພົ້ນ ຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຖືໝັ້ນວິນຍານ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ລຸດພົ້ນດີແລ້ວ

ສະມະນະຫຼືພາມເຫຼົ່າໃດລຸດພົ້ນດີແລ້ວ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ໝົດກິເລດໂດຍເດັດຂາດ

ສະມະນະຫຼືພາມເຫຼົ່າໃດໝົດກິເລດໂດຍເດັດຂາດ ສະມະນະຫຼືພາມເຫຼົ່ານັ້ນຊື່ວ່າ ບໍ່ມີວັດຕະເພື່ອຄວາມຜາກົດອີກ

ພິກຂຸຊື່ວ່າ ຜູ້ສະຫຼາດໃນຖານະ ໗ ປະການ ເປັນແນວນີ້

ພິກຂຸຜູ້ເພ່ງພິນິດໂດຍວິທີ ໓ ວິທີ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ເພ່ງພິນິດເປັນທາດ
໔. ເພ່ງພິນິດເປັນອາຍະຕະນະ
໓. ເພ່ງພິນິດເປັນປະຕິດຈະສະມຸບບາດ

ພິກຂຸຊື່ວ່ າຜູ້ເພ່ງພິນິດໂດຍວິທີ ໓ ວິທີ ເປັນແນວນີ້

ພິກຂຸຜູ້ສະຫຼາດໃນຖານະ ໗ ປະການ ຜູ້ເພ່ງພິນິດໂດຍວິທີ ໓ ວິທີ ເຮົາຮຽກວ່າ ອຸດົມບຸຣຸດ ຜູ້ໝົດກິເລດໂດຍເດັດຂາດ ຢູ່ຈົບພົມມະຈັນໃນທຳວິໄນນີ້

**ສັດຕັດຖານະສູດທີ ໕ ຈົບ**

# ໖. ສຳມາສຳພຸດທະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ເປັນພຣະສຳມາສຳພຸດທະເຈົ້າ

[໕໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ລຸດພົ້ນແລ້ວຍ້ອນເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຖືໝັ້ນຮູບ ບັນດິດຈຶ່ງຮຽກວ່າ ພຣະສຳມາສຳພຸດທະເຈົ້າ

ແມ່ນພິກຂຸຜູ້ລຸດພົ້ນດ້ວຍປັນຍາ ລຸດພົ້ນຍ້ອນເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຖືໝັ້ນຮູບ ເຮົາກໍຮຽກວ່າ ຜູ້ລຸດພົ້ນດ້ວຍປັນຍາ

ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ລຸດພົ້ນແລ້ວຍ້ອນເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຖືໝັ້ນເວທະນາ ບັນດິດຈຶ່ງຮຽກວ່າ ພຣະສຳມາສຳພຸດທະເຈົ້າ

ແມ່ນພິກຂຸ ຜູ້ລຸດພົ້ນດ້ວຍປັນຍາ ລຸດພົ້ນຍ້ອນເບື່ອໜ່າຍ ຯລຯ ເຮົາກໍຮຽກວ່າ ຜູ້ລຸດພົ້ນດ້ວຍປັນຍາ

ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ລຸດພົ້ນແລ້ວຍ້ອນເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຖືໝັ້ນສັນຍາ ຯລຯ ສັງຂານ ຯລຯ ວິນຍານ ບັນດິດຈຶ່ງຮຽກວ່າ ພຣະສຳມາສຳພຸດທະເຈົ້າ

ແມ່ນພິກຂຸຜູ້ລຸດພົ້ນດ້ວຍປັນຍາ ລຸດພົ້ນຍ້ອນເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ຍ້ອນບໍ່ຖືໝັ້ນວິນຍານ ເຮົາກໍຮຽກວ່າ ຜູ້ລຸດພົ້ນດ້ວຍປັນຍາ ໃນເລື້ອງນັ້ນຈະຜິດແຜກແຕກຕ່າງກັນແນວໃດ ຄື ລະຫວ່າງພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ກັບພິກຂຸຜູ້ລຸດພົ້ນດ້ວຍປັນຍາມີອັນໃດຕ່າງກັນ

ພິກຂຸທັງຫຼາຍ ພາກັນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກ

ເຈົ້າເປັນທີ່ເພິ່ງ ຂ້າແດ່  ພຣະອົງຜູ້ຈະເລີນ ຂໍປະທານວະໂອກາດ ສະເພາະພຣະຜູ້ມີພຣະພາກ ເຈົ້າ ທໍ່ນັ້ນທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ່ງຊັດ ພິກຂຸທັງຫຼາຍຟັງຈາກ ພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈ ໃຫ້ດີ ເຮົາຈັກກ່າວ

ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງ ນີ້ຂຶ້ນ ວ່າ

ພິກຂຸທັງຫຼາຍ ພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ເຮັດທາງທີ່ຍັງບໍ່ ເກີດໃຫ້ເກີດຂຶ້ນ ເຮັດໃຫ້ຮູ້ຈັກທາງທີ່ໃຜ ໆ ບໍ່ຮູ້ຈັກ ບອກທາງທີ່ຍັງບໍ່ມີໃຜບອກ ເປັນຜູ້ຮູ້ຈັກທາງ ຮູ້ແຈ້ງທາງ ສະຫຼາດໃນທາງ ພິກຂຸທັງຫຼາຍ ສ່ວນເຫຼົ່າສາວົກໃນບັດນີ້ ເປັນຜູ້ດຳເນີນໄປຕາມ ທາງຢູ່ ເປັນຜູ້ຕາມມາໃນພາຍຫຼັງ

ນີ້ແລ ເປັນຄວາມຜິດແຜກແຕກຕ່າງກັນ ລະຫວ່າງພຣະຕະຖາຄົດອະຣະຫັນຕະສຳມາ ສຳພຸດທະເຈົ້າກັບພິກຂຸຜູ້ລຸດພົ້ນດ້ວຍປັນຍາ

**ສຳມາສຳພຸດທະສູດທີ ໖ ຈົບ**

## ກ. ອະນັດຕະລັກຂະນະສູດ

### ວ່າດ້ວຍລັກສະນະແຫ່ງອະນັດຕາ

[໕໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ປ່າອິສິປະຕະນະ ມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຢູ່ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພຣະປັນຈະວັກຄີ ມາຕັດວ່າ ຯລຯ ແລ້ວໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ຮູບເປັນອະນັດຕາ ຖ້າຮູບນີ້ຈັກເປັນອັດຕາແທ້ແລ້ວ ຮູບນີ້ບໍ່ເພິ່ງເປັນໄປ ເພື່ອອາພາດ ແລະ ບຸກຄົນເພິ່ງໄດ້ໃນຮູບວ່າ ຮູບຂອງເຮົາຈົ່ງເປັນແນວນີ້ ຮູບຂອງເຮົາຢ່າໄດ້ ເປັນແນວນັ້ນ ກໍຍ້ອນຮູບເປັນອະນັດຕາ ສັນນັ້ນ ຮູບຈຶ່ງເປັນໄປເພື່ອອາພາດ ແລະ ບຸກຄົນຍ່ອມ ບໍ່ໄດ້ໃນຮູບວ່າ ຮູບຂອງເຮົາຈົ່ງເປັນແນວນີ້ ຮູບຂອງເຮົາຢ່າໄດ້ເປັນແນວນັ້ນ

ເວທະນາເປັນອະນັດຕາ ຖ້າເວທະນານີ້ຈັກເປັນອັດຕາແທ້ແລ້ວ ເວທະນານີ້ບໍ່ເພິ່ງເປັນ

ໄປເພື່ອອາພາດ ແລະບຸກຄົນເພິ່ງໄດ້ໃນເວທະນາວ່າ ເວທະນາຂອງເຮົາຈົ່ງເປັນແນວນີ້ ເວທະນາຂອງເຮົາຢ່າໄດ້ເປັນແນວນັ້ນ ກໍຍ້ອນເວທະນາເປັນອະນັດຕາ ສັນນັ້ນ ເວທະນາຈຶ່ງເປັນໄປເພື່ອອາພາດ ແລະ ບຸກຄົນຍ່ອມບໍ່ໄດ້ໃນເວທະນາວ່າ ເວທະນາຂອງເຮົາຈົ່ງເປັນແນວນີ້ ເວທະນາຂອງເຮົາຢ່າໄດ້ເປັນແນວນັ້ນ

ສັນຍາເປັນອະນັດຕາ ฯລฯ

ສັງຂານເປັນອະນັດຕາ ຖ້າສັງຂານນີ້ຈັກເປັນອັດຕາແທ້ແລ້ວ ສັງຂານນີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະ ບຸກຄົນເພິ່ງໄດ້ໃນສັງຂານວ່າ ສັງຂານຂອງເຮົາຈົ່ງເປັນແນວນີ້ ສັງຂານຂອງເຮົາຢ່າໄດ້ເປັນແນວນັ້ນ ກໍຍ້ອນສັງຂານເປັນອະນັດຕາ ສະນັ້ນ ສັງຂານຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນສັງຂານວ່າ ສັງຂານຂອງເຮົາຈົ່ງເປັນແນວນີ້ ສັງຂານຂອງເຮົາຢ່າໄດ້ເປັນແນວນັ້ນ

ວິນຍານເປັນອະນັດຕາ ຖ້າວິນຍານນີ້ຈັກເປັນອັດຕາແທ້ແລ້ວ ວິນຍານນີ້ບໍ່ເພິ່ງເປັນໄປເພື່ອອາພາດ ແລະ ບຸກຄົນເພິ່ງໄດ້ໃນວິນຍານວ່າ ວິນຍານຂອງເຮົາຈົ່ງເປັນແນວນີ້ ວິນຍານຂອງເຮົາຢ່າໄດ້ເປັນແນວນັ້ນ ກໍຍ້ອນວິນຍານເປັນອະນັດຕາ ສະນັ້ນ ວິນຍານຈຶ່ງເປັນໄປເພື່ອອາພາດ ແລະບຸກຄົນຍ່ອມບໍ່ໄດ້ໃນວິນຍານວ່າ ວິນຍານຂອງເຮົາຈົ່ງເປັນແນວນີ້ ວິນຍານຂອງເຮົາຢ່າໄດ້ເປັນແນວນັ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ເວທະນາທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັນຍາແນວໃດແນວໜຶ່ງ ຯລຯ

ສັງຂານເຫຼົ່າໃດເຫຼົ່າໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ສັງຂານທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດອະນັດຕະລັກຂະນະສູດນີ້ຈົບແລ້ວ ພຣະປັນຈະວັກຄີມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະຜູ້ມີພຣະພາກເຈົ້າຕັດໄວຍາກອນພາສິດນີ້ຢູ່ ພຣະປັນຈະວັກຄີກໍມີຈິດລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ

**ອະນັດຕະລັກຂະນະສູດທີ ໗ ຈົບ**

# ໗. ມະຫາລິສູດ

## ວ່າດ້ວຍເຈົ້າມະຫາລິ

[໖໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ເຈົ້າລິດສະຫວີພຣະນາມວ່າ ມະຫາລິສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໆລໆ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານປູຣະນະ ກັດສະປະກ່າວແນວນີ້ວ່າ ຄວາມເສົ້າໝອງຂອງສັດທັງຫຼາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫຼາຍບໍ່ມີເຫດ ບໍ່ມີປັດໄຈ ເສົ້າໝອງ ເອງ ຄວາມບໍລິສຸດຂອງສັດທັງຫຼາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫຼາຍບໍ່ມີເຫດ ບໍ່ມີ ປັດໄຈ ບໍລິສຸດເອງ ໃນເລື້ອງນີ້ພຣະຜູ້ມີພຣະພາກເຈົ້າຕັດແນວໄວ້ໃດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ມະຫາລິ ຄວາມເສົ້າໝອງຂອງສັດທັງຫຼາຍ ມີເຫດ ມີປັດໄຈ ສັດທັງຫຼາຍມີເຫດ ມີປັດໄຈ ຈຶ່ງເສົ້າໝອງ ຄວາມບໍລິສຸດຂອງສັດທັງຫຼາຍ ມີເຫດ ມີປັດໄຈ ສັດທັງຫຼາຍມີເຫດ ມີປັດໄຈ ຈຶ່ງບໍລິສຸດ

ຂ້າແດ່ ພຣະອົງຜູ້ຈະເລີນ ກໍເຫດປັດໄຈເພື່ອຄວາມເສົ້າໝອງຂອງສັດທັງຫຼາຍເປັນແນວໃດ? ສັດທັງຫຼາຍມີເຫດ ມີປັດໄຈ ເສົ້າໝອງແນວໃດ?

ມະຫາລິ ຫາກຮູບນີ້ຈັກໄດ້ເປັນທຸກສ່ວນດຽວ ມີແຕ່ທຸກຕິດຕາມ ຢັ່ງລົງສູ່ຄວາມທຸກ ບໍ່ຢັ່ງລົງສູ່ຄວາມສຸກແດ່ແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງຕິດໃຈໃນຮູບ ແຕ່ຍ້ອນຮູບເປັນສຸກ ມີສຸກຕິດຕາມ ຢັ່ງລົງສູ່ຄວາມສຸກ ບໍ່ຢັ່ງລົງສູ່ຄວາມທຸກສະເໝີໄປ ສະນັ້ນ ສັດທັງຫຼາຍ ຈຶ່ງຕິດໃຈໃນຮູບ ຍ້ອນກຳໜັດຈຶ່ງຖືກຮູບມັດໄວ້ ຍ້ອນຖືກຮູບມັດໄວ້ຈຶ່ງເສົ້າໝອງ ນີ້ເປັນເຫດ ເປັນປັດໄຈເພື່ອຄວາມເສົ້າໝອງຂອງສັດທັງຫຼາຍ ສັດທັງຫຼາຍມີເຫດ ມີປັດໄຈຈຶ່ງເສົ້າໝອງແນວນີ້

ຫາກເວທະນານີ້ ຈັກໄດ້ເປັນທຸກສ່ວນດຽວ ມີແຕ່ທຸກຕິດຕາມ ຢັ່ງລົງສູ່ຄວາມທຸກ ບໍ່ຢັ່ງລົງສູ່ຄວາມສຸກແດ່ແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງຕິດໃຈໃນເວທະນາ ແຕ່ຍ້ອນເວທະນາເປັນສຸກ ມີສຸກຕິດຕາມ ຢັ່ງລົງສູ່ຄວາມສຸກ ບໍ່ຢັ່ງລົງສູ່ຄວາມທຸກສະເໝີໄປ ສະນັ້ນ ສັດທັງຫຼາຍຈຶ່ງຕິດໃຈໃນເວທະນາ ຍ້ອນກຳໜັດຈຶ່ງຖືກເວທະນາມັດໄວ້ ຍ້ອນຖືກເວທະນາມັດໄວ້ຈຶ່ງເສົ້າໝອງ ນີ້ເປັນເຫດ ເປັນປັດໄຈເພື່ອຄວາມເສົ້າໝອງແຫ່ງສັດທັງຫຼາຍ ສັດທັງຫຼາຍມີເຫດ ມີປັດໄຈຈຶ່ງເສົ້າໝອງແນວນີ້

ທາກສັນຍານີ້ ຯລຯ

ທາກສັງຂານນີ້ ຈັກໄດ້ເປັນທຸກສ່ວນດຽວ ມີແຕ່ທຸກຕິດຕາມ ຢັ່ງລົງສູ່ຄວາມທຸກ ບໍ່ຢັ່ງລົງສູ່ຄວາມສຸກແດ່ແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງຕິດໃຈໃນສັງຂານ ແຕ່ຍ້ອນສັງຂານເປັນສຸກ ມີສຸກຕິດຕາມ ຢັ່ງລົງສູ່ຄວາມສຸກ ບໍ່ຢັ່ງລົງສູ່ຄວາມທຸກສະເໝີໄປ ສັນນັ້ນ ສັດທັງຫຼາຍຈຶ່ງຕິດໃຈໃນສັງຂານ ຍ້ອນກຳໜັດຈຶ່ງຖືກສັງຂານມັດໄວ້ ຍ້ອນຖືກສັງຂານມັດໄວ້ຈຶ່ງເສົ້າໝອງ ນີ້ເປັນເຫດ ເປັນປັດໄຈເພື່ອຄວາມເສົ້າໝອງຂອງສັດທັງຫຼາຍ ສັດທັງຫຼາຍມີເຫດ ມີປັດໄຈຈຶ່ງເສົ້າໝອງແນວນີ້

ທາກວິນຍານນີ້ຈັກໄດ້ເປັນທຸກສ່ວນດຽວ ມີແຕ່ທຸກຕິດຕາມ ຢັ່ງລົງສູ່ຄວາມທຸກ ບໍ່ຢັ່ງລົງສູ່ຄວາມສຸກແດ່ແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນວິນຍານ ແຕ່ຍ້ອນວິນຍານເປັນສຸກ ມີສຸກຕິດຕາມ ຢັ່ງລົງສູ່ຄວາມສຸກ ບໍ່ຢັ່ງລົງສູ່ຄວາມທຸກສະເໝີໄປ ສັນນັ້ນ ສັດທັງຫຼາຍ ຈຶ່ງຕິດໃຈໃນວິນຍານ ຍ້ອນກຳໜັດຈຶ່ງຖືກວິນຍານມັດໄວ້ ຍ້ອນຖືກວິນຍານມັດໄວ້ຈຶ່ງເສົ້າໝອງ ນີ້ເປັນເຫດ ເປັນປັດໄຈເພື່ອຄວາມເສົ້າໝອງຂອງສັດທັງຫຼາຍ ສັດທັງຫຼາຍມີເຫດ ມີປັດໄຈຈຶ່ງເສົ້າໝອງແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ສ່ວນເຫດປັດໄຈເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍເປັນແນວໃດ? ສັດທັງຫຼາຍມີເຫດ ມີປັດໄຈບໍລິສຸດແນວໃດ

ມະຫາລິ ທາກຮູບນີ້ຈັກໄດ້ເປັນສຸກສ່ວນດຽວ ມີແຕ່ສຸກຕິດຕາມ ຢັ່ງລົງສູ່ຄວາມສຸກ ບໍ່ຢັ່ງລົງສູ່ຄວາມທຸກແດ່ແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນຮູບ ແຕ່ຍ້ອນຮູບເປັນທຸກ ມີທຸກຕິດຕາມ ຢັ່ງລົງສູ່ຄວາມທຸກ ບໍ່ຢັ່ງລົງສູ່ຄວາມສຸກສະເໝີໄປ ສັນນັ້ນສັດທັງຫຼາຍຈຶ່ງເບື່ອໜ່າຍໃນຮູບ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈຶ່ງບໍລິສຸດ ນີ້ເປັນເຫດ ເປັນປັດໄຈເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ສັດທັງຫຼາຍມີເຫດ ມີປັດໄຈຈຶ່ງບໍລິສຸດແນວນີ້

ທາກເວທະນານີ້ ຈັກໄດ້ເປັນສຸກສ່ວນດຽວ ຯລຯ
ທາກສັນຍານີ້ ຈັກໄດ້ເປັນສຸກສ່ວນດຽວ ຯລຯ
ທາກສັງຂານນີ້ ຈັກໄດ້ເປັນສຸກສ່ວນດຽວ ຯລຯ

ທາກວິນຍານນີ້ຈັກໄດ້ເປັນສຸກສ່ວນດຽວ ມີແຕ່ສຸກຕິດຕາມ ຢັ່ງລົງສູ່ຄວາມສຸກ ບໍ່ຢັ່ງລົງສູ່ຄວາມທຸກແດ່ແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນວິນຍານ ແຕ່ຍ້ອນວິນຍານເປັນທຸກ ມີທຸກຕິດຕາມ ຢັ່ງລົງສູ່ຄວາມທຸກ ບໍ່ຢັ່ງລົງສູ່ຄວາມສຸກສະເໝີໄປ ສັນນັ້ນ ສັດທັງຫຼາຍຈຶ່ງເບື່ອໜ່າຍໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈຶ່ງບໍລິສຸດ ນີ້ເປັນເຫດ ເປັນປັດໄຈເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ສັດທັງຫຼາຍມີເຫດ ມີປັດໄຈຈຶ່ງບໍລິສຸດແນວນີ້

**ມະຫາລິສູດທີ ໗ ຈົບ**

# ໙. ອາທິດຕະສູດ

## ວ່າດ້ວຍສິ່ງທີ່ເປັນຂອງຮ້ອນ

[໗໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຢູ່ບ່ອນນັ້ນແລ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບເປັນຂອງຮ້ອນ ເວທະນາເປັນຂອງຮ້ອນ ສັນຍາເປັນຂອງຮ້ອນ ສັງຂານເປັນຂອງຮ້ອນ ວິນຍານເປັນຂອງຮ້ອນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຯລຯ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອາທິດຕະສູດທີ ໙ ຈົບ**

# ໑໐. ນິຣຸດຕິປະຖະສູດ

## ວ່າດ້ວຍຫຼັກພາສາ

[໗໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຢູ່ບ່ອນນັ້ນແລ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຫຼັກການ ໓ ປະການນີ້ ຄື (໑) ຫຼັກພາສາ (໒) ຫຼັກການຕັ້ງຊື່ (໓) ຫຼັກການບັນຍັດ ບໍ່ໄດ້ຖືກປະຖິ້ມ ບໍ່ເຄີຍຖືກປະຖິ້ມ ຍ່ອມບໍ່ຖືກປະຖິ້ມ ຈັກບໍ່ຖືກປະຖິ້ມ ບໍ່ຖືກສະມະນະພາມຜູ້ເປັນວິນຍູຊົນຄັດຄ້ານແລ້ວ

ຫຼັກການ ໓ ປະການ ເປັນແນວໃດ? ຄື

໑. ຮູບໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຮຽກຮູບນັ້ນວ່າ ໄດ້ມີແລ້ວ ຕັ້ງຊື່ຮູບນັ້ນວ່າ ໄດ້ມີແລ້ວ ບັນຍັດຮູບນັ້ນວ່າ ໄດ້ມີແລ້ວ (ແຕ່) ບໍ່ຮຽກຮູບນັ້ນວ່າ ມີຢູ່ ບໍ່ຮຽກຮູບນັ້ນວ່າ ຈັກມີ ເວທະນາໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຮຽກເວທະນານັ້ນວ່າ ໄດ້ມີແລ້ວ ຕັ້ງຊື່ເວທະນານັ້ນວ່າ ໄດ້ມີແລ້ວ ບັນຍັດເວທະນານັ້ນວ່າ ໄດ້ມີແລ້ວ (ແຕ່) ບໍ່ຮຽກເວທະນານັ້ນວ່າ ມີຢູ່ ບໍ່ຮຽກເວທະນານັ້ນ

ວ່າ ຈັກມີ ສັນຍາໃດ ໆລໆ ສັງຂານເຫຼົ່າໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຮຽກສັງຂານນັ້ນວ່າ ໄດ້ມີແລ້ວ ຕັ້ງຊື່ສັງຂານນັ້ນວ່າ ໄດ້ມີແລ້ວ ບັນຍັດສັງຂານເຫຼົ່ານັ້ນວ່າ ໄດ້ມີແລ້ວ (ແຕ່) ບໍ່ຮຽກສັງຂານເຫຼົ່ານັ້ນວ່າ ມີຢູ່ ບໍ່ຮຽກສັງຂານເຫຼົ່ານັ້ນວ່າ ຈັກມີ ວິນຍານໃດລ່ວງໄປ ດັບໄປ ຜັນແປໄປແລ້ວ ຮຽກວິນຍານນັ້ນວ່າ ໄດ້ມີແລ້ວ ຕັ້ງຊື່ວິນຍານນັ້ນວ່າ ໄດ້ມີແລ້ວ ບັນຍັດວິນຍານນັ້ນວ່າ ໄດ້ມີແລ້ວ (ແຕ່) ບໍ່ຮຽກວິນຍານນັ້ນວ່າ ມີຢູ່ ບໍ່ຮຽກວິນຍານນັ້ນວ່າ ຈັກມີ

໒. ຮູບຍັງບໍ່ເກີດ ຍັງບໍ່ປາກົດ ຮຽກຮູບນັ້ນວ່າ ຈັກມີ ຕັ້ງຊື່ຮູບນັ້ນວ່າ ຈັກມີ ແລະບັນຍັດຮູບນັ້ນວ່າ ຈັກມີ (ແຕ່) ບໍ່ຮຽກຮູບນັ້ນວ່າ ມີຢູ່ ບໍ່ຮຽກຮູບນັ້ນວ່າ ໄດ້ມີແລ້ວ ເວທະນາໃດຍັງບໍ່ເກີດ ຍັງບໍ່ປາກົດ ຮຽກເວທະນານັ້ນວ່າ ຈັກມີ ຕັ້ງຊື່ເວທະນານັ້ນວ່າ ຈັກມີ ແລະບັນຍັດເວທະນານັ້ນວ່າ ຈັກມີ (ແຕ່) ບໍ່ຮຽກເວທະນານັ້ນວ່າ ມີຢູ່ ບໍ່ຮຽກເວທະນານັ້ນວ່າ ໄດ້ມີແລ້ວ ສັນຍາໃດ ໆລໆ ສັງຂານເຫຼົ່າໃດຍັງບໍ່ເກີດ ຍັງບໍ່ປາກົດ ຮຽກສັງຂານເຫຼົ່ານັ້ນວ່າ ຈັກມີ ຕັ້ງຊື່ສັງຂານເຫຼົ່ານັ້ນວ່າ ຈັກມີ ແລະ ບັນຍັດສັງຂານເຫຼົ່ານັ້ນວ່າ ຈັກມີ (ແຕ່) ບໍ່ຮຽກສັງຂານເຫຼົ່ານັ້ນວ່າ ມີຢູ່ ບໍ່ຮຽກສັງຂານເຫຼົ່ານັ້ນວ່າ ໄດ້ມີແລ້ວ ວິນຍານໃດຍັງບໍ່ເກີດ ຍັງບໍ່ປາກົດ ຮຽກວິນຍານນັ້ນວ່າ ຈັກມີ ຕັ້ງຊື່ວິນຍານນັ້ນວ່າ ຈັກມີ ແລະ ບັນຍັດວິນຍານນັ້ນວ່າ ຈັກມີ (ແຕ່) ບໍ່ຮຽກວິນຍານນັ້ນວ່າ ມີຢູ່ ບໍ່ຮຽກວິນຍານນັ້ນວ່າ ມີແລ້ວ

໓. ຮູບໃດເກີດແລ້ວ ຜາກົດແລ້ວ ຮຽກຮູບນັ້ນວ່າ ມີຢູ່ ຕັ້ງຊື່ຮູບນັ້ນວ່າ ມີຢູ່ ແລະບັນຍັດຮູບນັ້ນວ່າ ມີຢູ່ (ແຕ່) ບໍ່ຮຽກຮູບນັ້ນວ່າ ໄດ້ມີແລ້ວ ບໍ່ຮຽກຮູບນັ້ນວ່າ ຈັກມີເວທະນາໃດເກີດແລ້ວ ຜາກົດແລ້ວ ຮຽກເວທະນານັ້ນວ່າ ມີຢູ່ ຕັ້ງຊື່ເວທະນານັ້ນວ່າ ມີຢູ່ ແລະບັນຍັດເວທະນານັ້ນວ່າ ມີຢູ່ (ແຕ່) ບໍ່ຮຽກເວທະນານັ້ນວ່າ ໄດ້ມີແລ້ວ ບໍ່ຮຽກເວທະນານັ້ນວ່າ ຈັກມີ ສັນຍາໃດ ໆລໆ ສັງຂານເຫຼົ່າໃດເກີດແລ້ວ ຜາກົດແລ້ວ ຮຽກສັງຂານເຫຼົ່ານັ້ນວ່າ ມີຢູ່ ຕັ້ງຊື່ສັງຂານເຫຼົ່ານັ້ນວ່າ ມີຢູ່ ແລະບັນຍັດສັງຂານເຫຼົ່ານັ້ນວ່າ ມີຢູ່ (ແຕ່) ບໍ່ຮຽກສັງຂານເຫຼົ່ານັ້ນວ່າ ໄດ້ມີແລ້ວ ບໍ່ຮຽກ ສັງຂານເຫຼົ່ານັ້ນວ່າ ຈັກມີ ວິນຍານໃດເກີດແລ້ວ ຜາກົດແລ້ວ ຮຽກວິນຍານນັ້ນວ່າ ມີຢູ່ ຕັ້ງຊື່ວິນຍານນັ້ນວ່າ ມີຢູ່ ແລະ ບັນຍັດວິນຍານນັ້ນວ່າ ມີຢູ່ (ແຕ່) ບໍ່ຮຽກວິນຍານນັ້ນວ່າ ໄດ້ມີແລ້ວບໍ່ຮຽກວິນຍານນັ້ນວ່າ ຈັກມີ

ພິກຂຸທັງຫຼາຍ ຫຼັກການ ໓ ປະການ ຄື (໑) ຫຼັກພາສາ (໒) ຫຼັກການຕັ້ງຊື່ (໓) ຫຼັກການບັນຍັດ ບໍ່ໄດ້ຖືກປະຖິ້ມ ບໍ່ເຄີຍຖືກປະຖິ້ມ ຍ່ອມບໍ່ຖືກປະຖິ້ມ ຈັກບໍ່ຖືກປະຖິ້ມ ບໍ່ຖືກສະ

ມະນະພາມຜູ້ເປັນວິນຍູຊົນຄັດຄ້ານແລ້ວ

ພິກຂຸທັງຫຼາຍ ແມ່ນຊົນຊາວອຸກກະລະຊົນນະບົດ ກັບຊົນຊາວວັດສະພັນຍະຊົນນະບົດ ທັງ ໒ ພວກນັ້ນ ເປັນຜູ້ມີອະເຫຕຸກະວາທະ ເປັນຜູ້ມີອະກິຣິຍະວາທະ ເປັນຜູ້ມີນັດຖິກະວາທະ ກໍໄດ້ສຳຄັນວ່າຫຼັກການ ໓ ປະການ ຄື (໑) ຫຼັກພາສາ (໒) ຫຼັກການຕັ້ງຊື່ (໓) ຫຼັກການບັນຍັດ ບໍ່ຄວນຕິຕຽນ ບໍ່ຄວນຄັດຄ້ານ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຢ້ານຖືກນິນທາ ໃສ່ໂທດ ແລະຖືກຄັດຄ້ານ

**ນິຣຸດຕິປະຖະສູດທີ ໑໐ ຈົບ**

**ອຸປະຍະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

- ໑. ອຸປະຍະສູດ
- ໒. ພິຊະສູດ
- ໓. ອຸທານະສູດ
- ໔. ອຸປາທານະປະຣິປະວັດຕະນະສູດ
- ໕. ສັດຕັດຖານະສູດ
- ໖. ສຳມາສຳພຸດທະສູດ
- ໗. ອະນັດຕະລັກຂະນະສູດ
- ໘. ມະຫາລິສູດ
- ໙. ອາທິດຕະສູດ
- ໑໐. ນິຣຸດຕິປະຖະສູດ

# ໘. ອະຣະຫັນຕະວັກ

## ໝວດວ່າດ້ວຍພຣະອະຣະຫັນ

## ໑. ອຸປາທິຍະມານະສູດ

### ວ່າດ້ວຍຜູ້ຢຶດໝັ້ນຂັນ

[໗໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນເມື່ອຢຶດໝັ້ນ ກໍຖືກມານຜູກມັດໄວ້ ເມື່ອບໍ່ຢຶດໝັ້ນກໍພົ້ນຈາກມານຜູ້ມີບາບ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ ພຣະສຸຄົດເຈົ້າຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຢຶດໝັ້ນຮູບກໍຖືກມານຜູກມັດໄວ້ ເມື່ອບໍ່ຢຶດໝັ້ນກໍພົ້ນຈາກມານຜູ້ມີບາບ ເມື່ອຢຶດໝັ້ນເວທະນາກໍຖືກມານຜູກມັດໄວ້ ເມື່ອບໍ່ຢຶດໝັ້ນກໍພົ້ນຈາກມານຜູ້ມີບາບ ເມື່ອຢຶດໝັ້ນສັນຍາ ຯລຯ ສັງຂານ ຯລຯ ເມື່ອຢຶດໝັ້ນວິນຍານກໍຖືກມານຜູກມັດໄວ້ ເມື່ອບໍ່ຢຶດໝັ້ນກໍພົ້ນຈາກມານຜູ້ມີບາບ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ໂດຍພິດສະດານໄດ້ແນວນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ໂດຍພິດສະດານໄດ້ດີແລ້ວ ບຸກຄົນເມື່ອຢຶດໝັ້ນຮູບກໍຖືກມານຜູກມັດໄວ້ ເມື່ອບໍ່ຢຶດໝັ້ນກໍພົ້ນຈາກມານຜູ້ມີບາບ ເມື່ອຢຶດໝັ້ນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ເມື່ອຢຶດໝັ້ນວິນຍານກໍຖືກ

ມານຜູກມັດໄວ້ ເມື່ອບໍ່ຍຶດໝັ້ນກໍພົ້ນຈາກມານຜູ້ມີບາບ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ຄັ້ງນັ້ນ ພິກຂຸນັ້ນຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຈາກອາສະນະ ຖວາຍອະພິວາດ ທຳປະທັກຂິນແລ້ວຈາກໄປ ຕໍ່ມາ ພິກຂຸນັ້ນຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນ ບວດເປັນບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ພິກຂຸນັ້ນ ໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອຸປາທິຍະມານະສູດທີ ໑ ຈົບ**

# ໔. ມັນຍະມານະສູດ

## ວ່າດ້ວຍຜູ້ກຳນົດໝາຍຂັນ

[໖໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ຯລຯ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນເມື່ອກຳນົດໝາຍ ກໍຖືກມານຜູກມັດໄວ້ ເມື່ອບໍ່ກຳນົດໝາຍກໍພົ້ນຈາກມານຜູ້ມີບາບ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອກຳນົດໝາຍຮູບ ກໍຖືກມານຜູກມັດໄວ້ ເມື່ອບໍ່ກຳນົດໝາຍກໍພົ້ນຈາກມານຜູ້ມີບາບ ເມື່ອກຳນົດໝາຍເວທະນາ ຯລຯ ສັນຍາ ຯລຯ ສັງຂານ

ฯລฯ ເມື່ອກຳນົດໝາຍວິນຍານກໍຖືກມານຜູກມັດໄວ້ ເມື່ອບໍ່ກຳນົດໝາຍກໍພົ້ນຈາກມານຜູ້ມີບາບ ฯລฯ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ໂດຍພິດສະດານໄດ້ຢ່າງນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວແລ້ວໄວ້ຫຍໍ້ໂດຍພິດສະດານໄດ້ດີແລ້ວ ບຸກຄົນເມື່ອກຳນົດໝາຍຮູບ ກໍຖືກມານຜູກມັດໄວ້ ເມື່ອບໍ່ກຳນົດໝາຍກໍພົ້ນຈາກມານຜູ້ມີບາບ ເມື່ອກຳນົດໝາຍເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ເມື່ອກຳນົດໝາຍວິນຍານກໍຖືກມານຜູກມັດໄວ້ ເມື່ອບໍ່ກຳນົດໝາຍ ກໍພົ້ນຈາກມານຜູ້ມີບາບ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ฯລฯ

ອັນໜຶ່ງ ພິກຂຸນັ້ນ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ມັນຍະມານະສູດທີ ໘ ຈົບ**

# ໙. ອະພິນັນທະມານະສູດ

## ວ່າດ້ວຍຜູ້ເພີດເພີນຂັນ

[໗໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ฯລฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ฯລฯ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນເມື່ອເພີດເພີນ ກໍຖືກມານຜູກມັດໄວ້ ເມື່ອບໍ່ເພີດເພີນກໍພົ້ນຈາກມານຜູ້ມີບາບ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອເພີດເພີນຮູບ ກໍຖືກມານຜູກມັດໄວ້ ເມື່ອບໍ່ເພີດ

ເພີນກໍພົ້ນຈາກມານຜູ້ມີບາບ ເມື່ອເພີດເພີນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ເມື່ອເພີດເພີນວິນຍານ ກໍຖືກມານຜູກມັດໄວ້ ເມື່ອບໍ່ຍຶດໝັ້ນກໍພົ້ນຈາກມານຜູ້ມີບາບ

ຂ້າພຣະອົງເຂົ້າໃຈ ເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໂດຍພິດສະດານໄດ້ຢ່າງນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວແລ້ວໄວ້ຫຍໍ້ໂດຍພິດສະດານໄດ້ດີແລ້ວ ບຸກຄົນເມື່ອເພີດເພີນຮູບ ກໍຖືກມານຜູກມັດໄວ້ ເມື່ອບໍ່ເພີດເພີນກໍພົ້ນຈາກມານຜູ້ມີບາບ ເມື່ອເພີດເພີນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ເມື່ອເພີດເພີນວິນຍານ ກໍຖືກມານຜູກມັດໄວ້ ເມື່ອບໍ່ເພີດເພີນກໍພົ້ນຈາກມານຜູ້ມີບາບ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ຯລຯ

ອັນໜຶ່ງ ພິກຂຸນັ້ນ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອະພິນັນທະມານະສູດທີ ໓ ຈົບ**

# ໔. ອະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໖໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ຯລຯ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພິກຂຸ ສິ່ງໃດບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈ ໃນສິ່ງນັ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຮູບບໍ່ທ່ຽງ ຂ້າພຣະອົງເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ฯລฯ ສັນຍາ ฯລฯສັງຂານ ฯລฯ ວິນຍານບໍ່ທ່ຽງ ຂ້າພຣະອົງເພິ່ງລະຄວາມພໍໃຈໃນວິນຍານນັ້ນ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໂດຍພິດສະດານໄດ້ຢ່າງນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ດີແລ້ວ ຮູບບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນວິນຍານນັ້ນ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ฯລฯ

ອັນໜຶ່ງ ພິກຂຸນັ້ນ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອະນິດຈະສູດທີ ໔ ຈົບ**

# ໕. ທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກ

[໓໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ฯລฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ฯລฯ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ສິ່ງໃດເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຮູບເປັນທຸກ ຂ້າພຣະອົງເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນທຸກ ຂ້າພຣະອົງເພິ່ງລະຄວາມພໍໃຈ ໃນ

ວິນຍານນັ້ນ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໂດຍພິດສະດານໄດ້ແນວນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ດີແລ້ວ ຮູບເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນວິນຍານນັ້ນ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ຯລຯ

ອັນໜຶ່ງ ພິກຂຸນັ້ນ ໄດ້ເປັນພຣະອະຣະຫັນອົງອີກໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ທຸກຂະສູດທີ ໕ ຈົບ**

## ໖. ອະນັດຕະສູດ

### ວ່າດ້ວຍສິ່ງທີ່ເປັນອະນັດຕາ

[໖໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ຯລຯ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ສິ່ງໃດເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ແນວໃດ

ຂ້າແດ່ ພຣະອົງຜູ້ຈະເລີນ ຮູບເປັນອະນັດຕາ ຂ້າພຣະອົງເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນອະນັດຕາ ຂ້າພຣະອົງເພິ່ງລະຄວາມພໍໃຈໃນວິນຍານນັ້ນ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໂດຍພິດສະດານໄດ້ແນວນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ດີແລ້ວ ຮູບເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນວິນຍານນັ້ນ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ฯລฯ

ອັນໜຶ່ງ ພິກຂຸນັ້ນໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອະນັດຕະສູດທີ ໖ ຈົບ**

# ๗. ອະນັດຕະນິຍະສູດ

## ວ່າດ້ວຍສິ່ງທີ່ບໍ່ເນື່ອງດ້ວຍອັດຕາ

[໖໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ฯລฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ฯລฯ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ສິ່ງໃດບໍ່ເນື່ອງດ້ວຍອັດຕາ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຮູບບໍ່ແມ່ນສິ່ງທີ່ເນື່ອງດ້ວຍອັດຕາ ຂ້າພຣະອົງເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານບໍ່ແມ່ນສິ່ງທີ່ເນື່ອງດ້ວຍອັດຕາ ຂ້າພຣະອົງເພິ່ງລະຄວາມພໍໃຈໃນວິນຍານນັ້ນ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ໂດຍພິດສະດານໄດ້ແນວນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ດີແລ້ວ ຮູບບໍ່ແມ່ນສິ່ງທີ່ເນື່ອງດ້ວຍອັດຕາ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານບໍ່ແມ່ນສິ່ງທີ່ເນື່ອງດ້ວຍອັດຕາ ທ່ານເພິ່ງລະຄວາມພໍໃຈໃນວິນຍານນັ້ນ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ฯລฯ

ອັນໜຶ່ງ ພິກຂຸນັ້ນໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອະນັດຕະນິຍະສູດທີ ໗ ຈົບ**

## ໘. ຣະຊະນິຍະສັນຖິຕະສູດ

### ວ່າດ້ວຍສິ່ງທີ່ຈູງໃຈໃຫ້ກຳໜັດ

[໗໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ฯລฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ฯລฯ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ສິ່ງໃດຈູງໃຈໃຫ້ກຳໜັດ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ ຂ້າແດ່ພຣະສຸຄົດເຈົ້າ ຂ້າພຣະອົງເຂົ້າໃຈແລ້ວ

ພິກຂຸ ກໍທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຮູບເປັນສິ່ງຈູງໃຈໃຫ້ກຳໜັດ ຂ້າພຣະອົງເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນສິ່ງຈູງໃຈໃຫ້ກຳໜັດ ຂ້າພຣະອົງເພິ່ງລະຄວາມພໍໃຈໃນວິນຍານນັ້ນ ຂ້າພຣະອົງເຂົ້າໃຈເນື້ອຄວາມແຫ່ງພຣະພາສິດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ຫຍໍ້ ໂດຍພິດສະດານໄດ້ແນວນີ້

ດີແລ້ວ ດີແລ້ວ ພິກຂຸ ດີແທ້ ພິກຂຸ ທ່ານເຂົ້າໃຈເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານໄດ້ດີແລ້ວ ຮູບເປັນສິ່ງຈູງໃຈໃຫ້ກຳໜັດ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນສິ່ງຈູງໃຈໃຫ້ກຳໜັດ ທ່ານເພິ່ງລະຄວາມພໍໃຈໃນວິນຍານນັ້ນ

ພິກຂຸ ທ່ານເພິ່ງຮູ້ເນື້ອຄວາມແຫ່ງຄຳທີ່ເຮົາກ່າວໄວ້ຫຍໍ້ ໂດຍພິດສະດານແນວນີ້

ຯລຯ

ອັນໜຶ່ງ ພິກຂຸນັ້ນໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ຣະຊະນີຍະສັນຖິຕະສູດທີ ๗ ຈົບ**

## ໘. ຣາທະສູດ

### ວ່າດ້ວຍພຣະຣາທະ

[ກ໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາທະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ ເຫັນແນວໃດຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະໃນນິມິດທັງປວງໃນພາຍນອກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາ ອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາແນວໃດແນວໜຶ່ງ ຯລຯ
ສັນຍາແນວໃດແນວໜຶ່ງ ຯລຯ
ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ຣາທະ ເມື່ອບຸກຄົນຮູ້ ເຫັນແນວນີ້ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະ ມານານຸໄສ ໃນກາຍທີ່ມີວິນຍານນີ້ ແລະ ໃນນິມິດທັງປວງໃນພາຍນອກ

ຯລຯ

ອັນໜຶ່ງ ທ່ານພຣະຣາທະໄດ້ເປັນພຣະອະຣະຫັນອົງອີກໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ຣາທະສູດທີ ໙ ຈົບ**

# ໑໐. ສຸຣາທະສູດ

## ວ່າດ້ວຍພຣະສຸຣາທະ

[໗໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະສຸຣາທະ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ເຫັນແນວໃດ ໃຈຈຶ່ງຈະປາສະຈາກອະຫັງການ ມະມັງການ ແລະມານານຸໄສ ໃນກາຍທີ່ມີວິນຍານນີ້ ແລະ ໃນນິມິດທັງປວງໃນພາຍນອກ ກ້າວລ່ວງມານະດ້ວຍດີ ສະງົບລະງັບ ລຸດພົ້ນດີແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສຸຣາທະ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນຍ້ອນບໍ່ຖືໝັ້ນ

ເວທະນາແນວໃດແນວໜຶ່ງ ຯລຯ
ສັນຍາແນວໃດແນວໜຶ່ງ ຯລຯ
ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນ ອະຣິຍະສາວົກພິຈາລະນາເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນຍ້ອນບໍ່ຖືໝັ້ນ

ສຸຣາທະ ເມື່ອບຸກຄົນຮູ້ ເຫັນແນວນີ້ ໃຈຈຶ່ງຈະປາສະຈາກອະຫັງການ ມະມັງການ ແລະ ມານານຸໄສໃນກາຍທີ່ມີວິນຍານນີ້ ແລະໃນນິມິດທັງປວງໃນພາຍນອກ ກ້າວລ່ວງມານະດ້ວຍດີ ສະງົບລະງັບ ລຸດພົ້ນດີແລ້ວ

ฯลฯ

ອັນໜຶ່ງ ທ່ານພຣະສຸຣາທະໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນ ທັງຫຼາຍ

**ສຸຣາທະສູດທີ ໑໐ ຈົບ**

**ອະຣະຫັນຕະວັກທີ ๘ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

| | |
|---|---|
| ๑. ອຸປາທິຍະມານະສູດ | ๖. ມັນຍະມານະສູດ |
| ๒. ອະພິນັນທະມານະສູດ | ๗. ອະນິດຈະສູດ |
| ๓. ທຸກຂະສູດ | ๘. ອະນັດຕະສູດ |
| ๔. ອະນັດຕະນີຍະສູດ | ๙. ຣະຊະນີຍະສັນຖິຕະສູດ |
| ๕. ຣາທະສູດ | ๑๐. ສຸຣາທະສູດ |

# ໓. ຂັດຊະນີຍະວັກ

## ໝວດວ່າດ້ວຍຜູ້ຖືກຫຍໍ້າກິນ

## ໑. ອັດສາທະສູດ

### ວ່າດ້ວຍຄຸນຂອງຂັນ

[໗໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ຮູ້ແຈ້ງຄຸນ ໂທດ ແລະ ເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ຮູ້ແຈ້ງຄຸນ ໂທດແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

**ອັດສາທະສູດທີ ໑ ຈົບ**

## ໔. ສະມຸທະຍະສູດ

### ວ່າດ້ວຍຄວາມເກີດຂຶ້ນແຫ່ງຂັນ

[໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຄວາມເກີດຂຶ້ນ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ຮູ້ແຈ້ງຄວາມເກີດຂຶ້ນ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ຮູ້ແຈ້ງຄວາມເກີດຂຶ້ນ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ

ຮູ້ແຈ້ງຄວາມເກີດຂຶ້ນ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

**ສະມຸທະຍະສູດທີ ໔ ຈົບ**

# ໕. ທຸຕິຍະສະມຸທະຍະສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງຂັນ ສູດທີ ໔

[໗໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ຮູ້ແຈ້ງຄວາມເກີດຂຶ້ນ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ຮູ້ແຈ້ງຄວາມເກີດຂຶ້ນ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

**ທຸຕິຍະສະມຸທະຍະສູດທີ ໕ ຈົບ**

# ໖. ອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນ

[໗໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງ

ໃດເປັນອະນັດຕາ ສິ່ງນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ฯລฯ ແມ່ນໃນເວທະນາ ฯລฯ ແມ່ນໃນສັນຍາ ฯລฯ ແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ພຣະອະຣະຫັນທັງຫຼາຍເປັນຜູ້ເລີດ ປະເສີດທີ່ສຸດໃນໂລກກວ່າສັດໃນສັດຕາວາສະແລະພະວັຄຄະພົບ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ພຣະອະຣະຫັນທັງຫຼາຍມີຄວາມສຸກແທ້ນໍ
ຍ້ອນທ່ານບໍ່ມີຕັນຫາ ຕັດອັດສະມິມານະໄດ້ເດັດຂາດ
ທຳລາຍຕາໜ່າງຄືໂມຫະໄດ້ແລ້ວ
ພຣະອະຣະຫັນເຫຼົ່ານັ້ນເຖິງຄວາມບໍ່ຫວັ່ນໄຫວ
ມີຈິດບໍ່ຂຸ່ນມົວ ບໍ່ເປິເປື້ອນໃນໂລກ
ເປັນຜູ້ປະເສີດ ບໍ່ມີອາສະວະ ເປັນສັດຕະບຸຣຸດ
ເປັນພຸດທະບຸດ ພຸດທະໂອຣົດ ກຳນົດຮູ້ຂັນ ໕
ມີສັດທຳ ໗ ປະການເປັນໂຄຈອນ ຄວນສັນເສີນ
ທ່ານເປັນວິລະບຸລຸດຜູ້ຍິ່ງໃຫຍ່
ສົມບູນດ້ວຍຣັດຕະນະ ໗ ປະການ
ຕັ້ງໃຈຮູ້ແລ້ວໃນໄຕຣສິກຂາ
ລະຄວາມຢ້ານແລະຄວາມສະດຸ້ງຢ້ານໄດ້ເດັດຂາດແລ້ວ
ຍ່ອມທ່ຽວໄປໂດຍລຳດັບ
ທ່ານມະຫານາຄະຜູ້ສົມບູນດ້ວຍອົງ ໑໐
ມີຈິດຕັ້ງໝັ້ນ ປະເສີດທີ່ສຸດໃນໂລກ
ຍ້ອນທ່ານເຫຼົ່ານັ້ນ ບໍ່ມີຕັນຫາ ມີອະເສຂະຍານເກີດຂຶ້ນແລ້ວ
ມີຮ່າງກາຍນີ້ເປັນຮ່າງສຸດທ້າຍ
ບໍ່ຕ້ອງອາໄສຜູ້ອື່ນໃນຄຸນທີ່ເປັນແກ່ນສານແຫ່ງພົມມະຈັນ

ທ່ານເຫຼົ່ານັ້ນ ບໍ່ຫວັ່ນໄຫວໃນສ່ວນທັງຫຼາຍ
ພົ້ນຈາກພົບໃໝ່ເຖິງທັນຕະພູມ ຊະນະເດັດຂາດແລ້ວໃນໂລກ
ທ່ານເຫຼົ່ານັ້ນ ບໍ່ມີຄວາມເພີດເພີນຢູ່
ໃນສ່ວນເບື້ອງເທິງ ທ່າມກາງ ແລະເບື້ອງລ່າງ
ເປັນພຸດທະຜູ້ປະເສີດໃນໂລກ ຍ່ອມບັນລືສີຫະນາດ

**ອະຣະຫັນຕະສູດທີ ໔ ຈົບ**

# ໕. ທຸຕິຍະອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນ ສູດທີ ໔

[໗໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຯລຯ ແມ່ນໃນເວທະນາ ຯລຯ ແມ່ນໃນສັນຍາ ຯລຯ ແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ພຣະອະຣະຫັນທັງຫຼາຍເປັນຜູ້ເລີດ ປະເສີດທີ່ສຸດໃນໂລກກວ່າສັດໃນສັດຕາວາສະແລະພະວັກຄະພົບ

**ທຸຕິຍະອະຣະຫັນຕະສູດທີ ໕ ຈົບ**

# ໖. ສີຫະສູດ

## ວ່າດ້ວຍອຸປະມາດ້ວຍພະຍາຣາດຊະສີ

[໗໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເວລາແລງ ພະຍາຣາດຊະສີອອກຈາກ ບ່ອນອາໄສບິດກາຍເຫຼືອດຕາເບິ່ງຮອບ ໆ ທັງ ໔ ທິດ ບັນລືສີຫະນາດ ໓ ຄັ້ງ ແລ້ວຫຼີກໄປຫາ ເຫຍື່ອ ສ່ວນຫຼາຍພວກສັດເດຍຣັດສານທຸກໝູ່ເຫຼົ່າໄດ້ຍິນສຽງພະຍາຣາດຊະສີບັນລືສີຫະນາດ ຍ່ອມເຖິງຄວາມຢ້ານ ຫວາດຫວັ່ນ ແລະ ສະດຸ້ງ ສັດພວກທີ່ອາໄສຢູ່ໃນໂກນກໍຫຼົບເຂົ້າໂກນ ພວກທີ່ອາໄສຢູ່ໃນນໍ້າກໍມຸດລົງໃນນໍ້າ ພວກທີ່ອາໄສຢູ່ໃນປ່າກໍໜີເຂົ້າປ່າ ພວກສັດປີກກໍບິນຂຶ້ນສູ່ ອາກາດ ແມ່ນພະຍາຊ້າງຂອງພຣະມະຫາກະສັດ ເຊິ່ງມັດໄວ້ດ້ວຍເຊືອກທີ່ໝັ້ນຄົງໃນໝູ່ບ້ານ ເຂດແລະເມືອງຫຼວງ ກໍຕັດທຳລາຍເຄື່ອງມັດເຫຼົ່ານັ້ນຈົນຂາດ ຕົກໃຈຢ້ານ ຖ່າຍມູດຄູດ ໜີໄປ ທາງໃດທາງໜຶ່ງ

ພິກຂຸທັງຫຼາຍ ພະຍາຣາດຊະສີມີລິດຫຼາຍແນວນີ້ ມີສັກຫຼາຍແນວນີ້ ມີອານຸພາບ ຫຼາຍ ແນວນີ້

ພິກຂຸທັງຫຼາຍ ເມື່ອໃດ ຕະຖາຄົດ ອຸບັດຂຶ້ນໃນໂລກເປັນພຣະອະຣະຫັນ ຕັດສະຣູ້ດ້ວຍ ຕົນເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະ ພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ສະແດງທຳວ່າ ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບ ເປັນແນວນີ້ ຄວາມດັບແຫ່ງຮູບເປັນແນວນີ້ ເວທະນາເປັນແນວນີ້ ຯລຯ ສັນຍາເປັນແນວນີ້ ຯລຯ ສັງຂານເປັນແນວນີ້ ຯລຯ ວິນຍານເປັນແນວນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແນວນີ້ ຄວາມດັບແຫ່ງວິນຍານເປັນແນວນີ້

ເມື່ອນັ້ນ ແມ່ນເທບທັງຫຼາຍທີ່ມີອາຍຸຍືນ ມີວັນນະງົດງາມ ມີຄວາມສຸກຫຼາຍ ສະຖິດຢູ່ໃນ ວິມານສູງເປັນເວລາດົນ ໄດ້ສະດັບທຳມະເທດສະໜາຂອງຕະຖາຄົດແລ້ວ ສ່ວນຫຼາຍຕ່າງກໍເຖິງ ຄວາມຢ້ານ ຫວາດຫວັ່ນ ແລະສະດຸ້ງວ່າ ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ພວກເຮົາເປັນຜູ້ບໍ່ທ່ຽງ ແຕ່ໄດ້ສຳຄັນຕົນວ່າ ທ່ຽງ ເປັນຜູ້ບໍ່ໝັ້ນຍືນ ແຕ່ໄດ້ສຳຄັນຕົນວ່າ ໝັ້ນຍືນ ເປັນຜູ້ບໍ່ຄືເກົ່າ ແຕ່ໄດ້ສຳຄັນຕົນວ່າ ຄືເກົ່າ ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ເຖິງພວກເຮົາກໍບໍ່ທ່ຽງ ບໍ່ໝັ້ນ ຍືນ ບໍ່ຄືເກົ່າ ກ່ຽວເນື່ອງຢູ່ໃນສັກກາຍະ

ພິກຂຸທັງຫຼາຍ ຕະຖາຄົດກໍແນວນັ້ນຄືກັນ ມີລິດຫຼາຍແນວນີ້ ມີສັກຫຼາຍແນວນີ້ ມີອານຸ ພາບຫຼາຍແນວນີ້ ກວ່າໂລກພ້ອມທັງເທວະໂລກ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດ ຄາຖາປະພັນຕໍ່ໄປອີກ ວ່າ

ເມື່ອໃດ ພຣະພຸດທະເຈົ້າ ຜູ້ເປັນສາດສະດາ<br>
ທາບຸກຄົນປຽບທຽບບໍ່ໄດ້ ຕັດສະຣູ້ດ້ວຍປັນຍາອັນຍິ່ງແລ້ວ

ຊົງປະກາດທຳມະຈັກ ຄື ສັກກາຍະ
ຄວາມດັບແຫ່ງສັກກາຍະ ແລະອະຣິຍະມັກມີອົງ ໘
ທີ່ໃຫ້ເຖິງຄວາມດັບທຸກແກ່ໂລກພ້ອມທັງເທວະໂລກ
ເມື່ອນັ້ນ ແມ່ນພວກເທບທີ່ມີອາຍຸຍືນ ມີວັນນະ ມີຍົດ
ຟັງຄຳຂອງຕະຖາຄົດຜູ້ເປັນອະຣະຫັນ ລຸດພົ້ນແລ້ວ ຜູ້ໝັ້ນຄົງ
ຕ່າງກໍຫວາດຫວັ່ນເຖິງຄວາມສະດຸ້ງ ຄືເບື້ອຢ້ານຣາດຊະສີດ້ວຍຄິດວ່າ
ທ່ານຜູ້ຈະເລີນ ຮູ້ວ່າພວກເຮົາເປັນຜູ້ບໍ່ທ່ຽງ ຍັງບໍ່ກ້າວລ່ວງສັກກາຍະ

**ສີຫະສູດທີ ໒ ຈົບ**

# ໗. ຂັດຊະນີຍະສູດ

## ວ່າດ້ວຍຜູ້ຖືກຫຍໍ້າກິນ

[໗໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ເມື່ອຣະນຶກກໍຣະນຶກເຖິງຊາດກ່ອນໄດ້ເປັນຈຳນວນຫຼາຍ ສະມະນະຫຼືພາມເຫຼົ່ານັ້ນ ທັງໝົດຣະນຶກເຖິງອຸປາທານຂັນທັງ ໕ ປະການ ຫຼື ອຸປາທານຂັນປະການໃດປະການໜຶ່ງ

ອຸປາທານຂັນ ໕ ປະການ ເປັນແນວໃດ?

ຄື ເມື່ອຣະນຶກກໍຣະນຶກເຖິງຮູບແນວນີ້ວ່າ ໃນອະດີດຕະການ ເຮົາມີຮູບແນວນີ້ ເມື່ອຣະນຶກ ກໍຣະນຶກເຖິງເວທະນາແນວນີ້ວ່າ ໃນອະດີດຕະການ ເຮົາມີເວທະນາແນວນີ້ ເມື່ອຣະນຶກກໍຣະນຶກເຖິງ ສັນຍາແນວນີ້ວ່າ ໃນອະດີດຕະການ ເຮົາມີສັນຍາແນວນີ້ ເມື່ອຣະນຶກກໍຣະນຶກເຖິງສັງຂານແນວນີ້ວ່າ ໃນອະດີດຕະການ ເຮົາມີສັງຂານແນວນີ້ ເມື່ອຣະນຶກກໍຣະນຶກເຖິງວິນຍານແນວນີ້ວ່າ ໃນອະດີດຕະການ ເຮົາມີວິນຍານແນວນີ້

ພິກຂຸທັງຫຼາຍ ຍ້ອນອັນໃດຈຶ່ງຮຽກວ່າ ຮູບ ຍ້ອນສະຫຼາຍໄປຈຶ່ງຮຽກວ່າ ຮູບ ສະຫຼາຍໄປຍ້ອນອັນໃດ ສະຫຼາຍໄປຍ້ອນໜາວແດ່ ຮ້ອນແດ່ ຫິວແດ່ ຢາກແດ່ ຍ້ອນສຳຜັດແຫ່ງເຮືອດຍຸງ ລົມ ແດດ ແລະ ສັດເລືອຄານແດ່ ຍ້ອນສະຫຼາຍໄປຈຶ່ງຮຽກວ່າ ຮູບ

ຍ້ອນອັນໃດ ຈຶ່ງຮຽກວ່າເວທະນາ ຍ້ອນສະເຫວີຍຈຶ່ງຮຽກວ່າ ເວທະນາ ສະເຫວີຍອັນໃດ ສະເຫວີຍ ອາລົມສຸກແດ່ ທຸກແດ່ ບໍ່ແມ່ນທຸກບໍ່ແມ່ນສຸກແດ່ ຍ້ອນສະເຫວີຍຈຶ່ງຮຽກວ່າ ເວທະນາ

ຍ້ອນອັນໃດ ຈຶ່ງຮຽກວ່າສັນຍາ ຍ້ອນຈື່ໄດ້ໝາຍຮູ້ຈຶ່ງຮຽກວ່າ ສັນຍາ ຈື່ໄດ້ໝາຍຮູ້ອັນໃດ ຈື່ໄດ້ໝາຍຮູ້ສີຂຽວແດ່ ສີເຫຼືອງແດ່ ສີແດງແດ່ ສີຂາວແດ່ ຍ້ອນຈື່ໄດ້ໝາຍຮູ້ຈຶ່ງຮຽກວ່າ ສັນຍາ

ຍ້ອນອັນໃດ ຈຶ່ງຮຽກວ່າສັງຂານ ຍ້ອນປຸງແຕ່ງສັງຂະຕະທຳຈຶ່ງຮຽກວ່າ ສັງຂານ ປຸງແຕ່ງສັງຂະຕະທຳອັນໃດ ປຸງແຕ່ງສັງຂະຕະທຳ ຄື ຮູບໂດຍຄວາມເປັນຮູບ ເວທະນາໂດຍຄວາມເປັນເວທະນາ ສັນຍາໂດຍຄວາມເປັນສັນຍາ ສັງຂານໂດຍຄວາມເປັນສັງຂານ ວິນຍານໂດຍຄວາມເປັນວິນຍານ ຍ້ອນປຸງແຕ່ງສັງຂະຕະທຳຈຶ່ງຮຽກວ່າ ສັງຂານ

ຍ້ອນອັນໃດ ຈຶ່ງຮຽກວ່າວິນຍານ ຍ້ອນຮູ້ແຈ້ງຈຶ່ງຮຽກວ່າ ວິນຍານ ຮູ້ແຈ້ງອັນໃດ ຮູ້ແຈ້ງຣົດສົ້ມແດ່ ຂົມແດ່ ຣົດເຜັດແດ່ ຣົດຫວານແດ່ ຣົດຂື່ນແດ່ ຣົດບໍ່ຂື່ນແດ່ ຣົດເຄັມແດ່ ຣົດບໍ່ເຄັມແດ່ ຍ້ອນຮູ້ແຈ້ງຈຶ່ງຮຽກວ່າ ວິນຍານ

ພິກຂຸທັງຫຼາຍ ໃນຂໍ້ນັ້ນ ອະຣິຍະສາວົກຜູ້ໄດ້ສະດັບພິຈາລະນາເຫັນແນວນີ້ວ່າ ບັດນີ້ ເຮົາຖືກຮູບຫຍ້ຳກິນຢູ່ ແມ່ນໃນອະດີດຕະການ ເຮົາກໍຖືກຮູບຫຍ້ຳກິນແລ້ວ ຄື ກັບທີ່ຖືກຮູບທີ່ເປັນປັດຈຸບັນຫຍ້ຳກິນຢູ່ໃນເວລານີ້ ກໍເຮົາເອງເພິ່ງຊົມຊື່ນຮູບທີ່ເປັນອະນາຄົດ ແມ່ນໃນອະນາຄົດຕະການ ເຮົາກໍເພິ່ງຖືກຮູບຫຍ້ຳກິນ ຄືກັບທີ່ຖືກຮູບທີ່ເປັນປັດຈຸບັນຫຍ້ຳກິນຢູ່ໃນເວລານີ້ ທ່ານພິຈາລະນາເຫັນແນວນີ້ແລ້ວ ບໍ່ມີຄວາມອາໄລໃນຮູບທີ່ເປັນອະດີດ ບໍ່ຊົມຊື່ນຮູບທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບທີ່ເປັນປັດຈຸບັນ

ບັດນີ້ ເຮົາຖືກເວທະນາຫຍ້ຳກິນຢູ່ ແມ່ນໃນອະດີດຕະການ ເຮົາກໍຖືກເວທະນາຫຍ້ຳກິນແລ້ວ ຄື ກັບທີ່ຖືກເວທະນາທີ່ເປັນປັດຈຸບັນຫຍ້ຳກິນຢູ່ໃນເວລານີ້ ກໍເຮົາເອງເພິ່ງຊົມຊື່ນເວທະນາທີ່ເປັນອະນາຄົດ ແມ່ນໃນອະນາຄົດຕະການ ເຮົາກໍເພິ່ງຖືກເວທະນາຫຍ້ຳກິນ ຄື ກັບທີ່ຖືກເວທະນາ ທີ່ເປັນປັດຈຸບັນຫຍ້ຳກິນຢູ່ໃນເວລານີ້ ທ່ານພິຈາລະນາເຫັນແນວນີ້ແລ້ວ ບໍ່ມີຄວາມອາໄລໃນເວທະນາທີ່ເປັນອະດີດ ບໍ່ຊົມຊື່ນເວທະນາທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບເວທະນາທີ່ເປັນປັດຈຸບັນ

ບັດນີ້ ເຮົາຖືກສັນຍາຫຍ້ຳກິນຢູ່ ຯລຯ

ບັດນີ້ ເຮົາຖືກສັງຂານຫຍ້ຳກິນຢູ່ ແມ່ນໃນອະດີດຕະການ ເຮົາກໍຖືກສັງຂານຫຍ້ຳກິນແລ້ວ ຄື ກັບທີ່ຖືກສັງຂານທີ່ເປັນປັດຈຸບັນຫຍ້ຳກິນຢູ່ໃນເວລານີ້ ກໍເຮົາເອງເພິ່ງຊົມຊື່ນສັງຂານທີ່ເປັນອະນາຄົດ ແມ່ນໃນອະນາຄົດຕະການ ເຮົາກໍເພິ່ງຖືກສັງຂານຫຍ້ຳກິນ ຄື ກັບທີ່ຖືກສັງຂານທີ່ເປັນປັດຈຸບັນຫຍ້ຳກິນຢູ່ໃນເວລານີ້ ທ່ານພິຈາລະນາເຫັນແນວນີ້ແລ້ວ ບໍ່ມີຄວາມອາໄລໃນສັງຂານທີ່ເປັນອະດີດ ບໍ່ຊົມຊື່ນສັງຂານທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບສັງຂານທີ່ເປັນປັດຈຸບັນ

ບັດນີ້ ເຮົາຖືກວິນຍານຫຍໍ້າກິນຢູ່ ແມ່ນໃນອະດີດຕະການ ເຮົາກໍຖືກວິນຍານຫຍໍ້າກິນແລ້ວ ຄື ກັບທີ່ຖືກວິນຍານທີ່ເປັນປັດຈຸບັນຫຍໍ້າກິນຢູ່ໃນເວລານີ້ ກໍເຮົາເອງເພິ່ງຊົມຊື່ນວິນຍານທີ່ເປັນອະນາຄົດ ແມ່ນໃນອະນາຄົດຕະການ ເຮົາກໍເພິ່ງຖືກວິນຍານຫຍໍ້າກິນ ຄື ກັບທີ່ຖືກວິນຍານທີ່ເປັນປັດຈຸບັນຫຍໍ້າກິນຢູ່ໃນເວລານີ້ ທ່ານພິຈາລະນາເຫັນແນວນີ້ແລ້ວ ບໍ່ມີຄວາມອາໄລໃນວິນຍານທີ່ເປັນອະດີດ ບໍ່ຊົມຊື່ນວິນຍານທີ່ເປັນອະນາຄົດ ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກໍາໜັດ ເພື່ອດັບວິນຍານທີ່ເປັນປັດຈຸບັນ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາແນວໃດແນວໜຶ່ງ ฯລฯ

ສັນຍາແນວໃດແນວໜຶ່ງ ฯລฯ

ສັງຂານເຫຼົ່າໃດເຫຼົ່າໜຶ່ງ ฯລฯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ฯລฯ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກນີ້ ເຮົາຮຽກວ່າ ເຮັດໃຫ້ພິນາດ ບໍ່ກໍ່ ລະຖິ້ມ ບໍ່ຖືໝັ້ນ ກະຈັດກະຈາຍ ບໍ່ຮິບໂຮມໄວ້ ເຮັດໃຫ້ມອດ ບໍ່ກໍ່ໃຫ້ລຸກເປັນແປວຂຶ້ນ

ອະຣິຍະສາວົກເຮັດຫຍັງໃຫ້ພິນາດ ບໍ່ກໍ່ອັນໃດ?

ຄື ເຮັດຮູບໃຫ້ພິນາດ ບໍ່ກໍ່ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ເຮັດວິນຍານໃຫ້ພິນາດ ບໍ່ກໍ່ວິນຍານ

ລະຖິ້ມອັນໃດ? ບໍ່ຖືໝັ້ນອັນໃດ?

ຄື ລະຖິ້ມຮູບ ບໍ່ຖືໝັ້ນຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ລະຖິ້ມວິນຍານ ບໍ່ຖືໝັ້ນວິນຍານ

ກະຈັດກະຈາຍອັນໃດ? ບໍ່ຮິບໂຮມອັນໃດໄວ້?

ຄື ກະຈັດກະຈາຍຮູບ ບໍ່ຮິບໂຮມຮູບໄວ້ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ກະຈັດກະຈາຍວິນຍານ ບໍ່ຮິບໂຮມວິນຍານໄວ້

ເຮັດຫຍັງໃຫ້ມອດ? ບໍ່ກໍ່ອັນໃດໃຫ້ລຸກເປັນແປວຂຶ້ນ?

ຄື ເຮັດຮູບໃຫ້ມອດ ບໍ່ກໍ່ວິນຍານໃຫ້ລຸກເປັນແປວຂຶ້ນ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ເຮັດວິນຍານໃຫ້ມອດ ບໍ່ກໍ່ວິນຍານໃຫ້ລຸກເປັນແປວຂຶ້ນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຯລຯ ແມ່ນໃນເວທະນາ ຯລຯ ແມ່ນໃນສັນຍາ ຯລຯ ແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ພິກຂຸນີ້ ເຮົາຮຽກວ່າ ບໍ່ກໍ່ ບໍ່ເຮັດໃຫ້ພິນາດ ແຕ່ເປັນຜູ້ເຮັດໃຫ້ພິນາດໄດ້ແລ້ວດຳລົງຢູ່ ບໍ່ລະຖິ້ມ ບໍ່ຖືໝັ້ນ ແຕ່ເປັນຜູ້ລະຖິ້ມໄດ້ແລ້ວດຳລົງຢູ່ ບໍ່ກະຈັດກະຈາຍ ບໍ່ຮິບໂຮມໄວ້ ແຕ່ເປັນຜູ້ກະຈັດກະຈາຍໄດ້ແລ້ວດຳລົງຢູ່ ບໍ່ເຮັດໃຫ້ມອດ ບໍ່ກໍ່ໃຫ້ລຸກເປັນແປວຂຶ້ນ ແຕ່ເປັນຜູ້ເຮັດໃຫ້ມອດໄດ້ແລ້ວດຳລົງຢູ່

ອະຣິຍະສາວົກບໍ່ກໍ່ອັນໃດ? ບໍ່ເຮັດຫຍັງໃຫ້ພິນາດ? ແຕ່ເປັນຜູ້ເຮັດໃຫ້ພິນາດໄດ້ແລ້ວດຳລົງຢູ່

ຄື ບໍ່ກໍ່ຮູບ ບໍ່ເຮັດຮູບໃຫ້ພິນາດ ແຕ່ເປັນຜູ້ເຮັດໃຫ້ພິນາດໄດ້ແລ້ວດຳລົງຢູ່ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ກໍ່ວິນຍານ ບໍ່ເຮັດວິນຍານໃຫ້ພິນາດ ແຕ່ເປັນຜູ້ເຮັດໃຫ້ພິນາດໄດ້ແລ້ວດຳລົງຢູ່ ບໍ່ລະຖິ້ມ ບໍ່ຖືໝັ້ນອັນໃດ ແຕ່ເປັນຜູ້ລະຖິ້ມໄດ້ແລ້ວດຳລົງຢູ່

ຄື ບໍ່ລະຖິ້ມຮູບ ບໍ່ຖືໝັ້ນຮູບ ແຕ່ເປັນຜູ້ລະຖິ້ມໄດ້ແລ້ວດຳລົງຢູ່ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ລະຖິ້ມວິນຍານ ບໍ່ຖືໝັ້ນວິນຍານ ແຕ່ເປັນຜູ້ລະຖິ້ມໄດ້ແລ້ວດຳລົງຢູ່ ບໍ່ກະຈັດກະຈາຍອັນໃດ ບໍ່ຮິບໂຮມອັນໃດໄວ້ ແຕ່ເປັນຜູ້ກະຈັດກະຈາຍໄດ້ແລ້ວດຳລົງຢູ່

ຄື ບໍ່ກະຈັດກະຈາຍຮູບ ບໍ່ຮິບໂຮມຮູບໄວ້ ແຕ່ເປັນຜູ້ກະຈັດກະຈາຍໄດ້ແລ້ວດຳລົງຢູ່ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ກະຈັດກະຈາຍວິນຍານ ບໍ່ຮິບໂຮມວິນຍານໄວ້ ແຕ່ເປັນຜູ້ກະຈັດກະຈາຍໄດ້ແລ້ວດຳລົງຢູ່

ບໍ່ເຮັດຫຍັງໃຫ້ມອດ ບໍ່ກໍ່ອັນໃດໃຫ້ລຸກເປັນແປວຂຶ້ນ ແຕ່ເປັນຜູ້ເຮັດໃຫ້ມອດໄດ້ແລ້ວດຳລົງຢູ່

ຄື ບໍ່ເຮັດຮູບໃຫ້ມອດ ບໍ່ກໍ່ຮູບໃຫ້ລຸກເປັນແປວຂຶ້ນ ແຕ່ເປັນຜູ້ເຮັດໃຫ້ມອດໄດ້ແລ້ວດຳລົງຢູ່ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ເຮັດວິນຍານໃຫ້ມອດ ບໍ່ກໍ່ວິນຍານໃຫ້ລຸກເປັນແປວຂຶ້ນ ແຕ່ເປັນຜູ້ເຮັດໃຫ້ມອດໄດ້ແລ້ວດຳລົງຢູ່

ພິກຂຸທັງຫຼາຍ ເທບທັງຫຼາຍພ້ອມທັງອິນ ພົມ ແລະທ້າວປະຊາບໍດີ ຍ່ອມນະມັດສະການພິກຂຸຜູ້ມີຈິດລຸດພົ້ນແລ້ວແນວນີ້ ຈາກທີ່ໄກດ້ວຍສັດທາ ວ່າ

ຂ້າແດ່ ທ່ານຜູ້ເປັນບຸຣຸດອາຊາໄນ ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ຂ້າແດ່ ທ່ານຜູ້ເປັນບຸຣຸດສູງສຸດ ຂໍຄວາມນອບນ້ອມຈົ່ງມີແດ່ທ່ານ
ທີ່ພວກເຮົາບໍ່ຮູ້ວ່າ ທ່ານອາໄສອາລົມອັນໃດນໍ ຈຶ່ງເຂົ້າຊານຢູ່

**ຂັດຊະນີຍະສູດທີ ໗ ຈົບ**

# ໘. ປິນໂທລະຍະສູດ

## ວ່າດ້ວຍການທ່ຽວບິນທະບາດລ້ຽງຊີບ

[໘໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວັ້ນສັກກະ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຂັບໄລ່ພິກຂຸສົງຍ້ອນເຫດບາງຢ່າງແລ້ວໃນ

ເວລາເຊົ້າ ຊົງຄອງອັນຕະຣະວາສົກຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນເມືອງກະບິນລະພັດ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ເຂົ້າໄປສູ່ປ່າມະຫາວັນ ເພື່ອປະທັບພັກຜ່ອນກາງເວັນ ເມື່ອສະເດັດເຖິງແລ້ວ ໄດ້ປະທັບນັ່ງຢູ່ເຫງົ້າຕົ້ນໝາກຕູມໜຸ່ມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີບຫຼີກຢູ່ໃນບ່ອນສະງັດ ຊົງເກີດຄວາມຮໍ່າເພິງວ່າ ເຮົາເອງໄດ້ຂັບໄລ່ພິກຂຸສົງໄປແລ້ວ ໃນພິກຂຸເຫຼົ່ານີ້ ມີພວກພິກຂຸໃໝ່ບວດຍັງບໍ່ດົນ ເພິ່ງມາສູ່ທຳວິໄນນີ້ ເມື່ອພິກຂຸເຫຼົ່ານັ້ນ ບໍ່ເຫັນເຮົາກໍຈະເພິ່ງເປັນອື່ນ ປ່ຽນແປງໄປ ຄື ງົວນ້ອຍ ໆ ເມື່ອບໍ່ເຫັນແມ່ກໍຈະເພິ່ງເປັນອື່ນ ປ່ຽນແປງໄປສັນນັ້ນ ແລະ ຄືພືດທີ່ຍັງອ່ອນ ໆ ຂາດນ້ຳເພິ່ງຫ່ຽວເສົາແຫ້ງໄປສັນນັ້ນ ທາງທີ່ດີ ເຮົາເພິ່ງອະນຸເຄາະພິກຂຸສົງໃນບັດນີ້ ຄື ກັບທີ່ເຄີຍອະນຸເຄາະມາແລ້ວໃນຄັ້ງກ່ອນ ໆ ເທີ້ນ

ໃນຂະນະນັ້ນ ທ້າວສະຫຳບໍດີພົມໄດ້ຮູ້ຄວາມຮໍ່າເພິງຂອງພຣະຜູ້ມີພຣະພາກເຈົ້າດ້ວຍໃຈຂອງຕົນແລ້ວ ຈຶ່ງຫາຍໂຕຈາກພົມໂລກມາຜາກົດສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ຄືບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ແລ້ວພຣະອົງຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືມາທາງພຣະຜູ້ມີພຣະພາກເຈົ້າຂາບທູນດັ່ງນີ້ ວ່າ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງຂັບໄລ່ພິກຂຸສົງໄປແລ້ວໃນພິກຂຸເຫຼົ່ານີ້ ມີພວກພິກຂຸໃໝ່ບວດຍັງບໍ່ດົນ ເພິ່ງມາສູ່ພຣະທຳວິໄນນີ້ ເມື່ອພິກຂຸເຫຼົ່ານັ້ນ ບໍ່ເຫັນພຣະຜູ້ມີພຣະພາກເຈົ້າກໍຈະເພິ່ງເປັນອື່ນ ປ່ຽນແປງໄປ ຄື ງົວນ້ອຍ ໆ ເມື່ອບໍ່ເຫັນແມ່ກໍຈະເພິ່ງເປັນແນວອື່ນ ປ່ຽນແປງໄປສັນນັ້ນ ຫຼື ຄືພືດທີ່ຍັງອ່ອນ ໆ ຂາດນ້ຳເພິ່ງຫ່ຽວເສົາແຫ້ງໄປສັນນັ້ນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົມຊື່ນພິກຂຸສົງ ໂຜດພ່ຳສອນ ພິກຂຸສົງ ໂຜດອະນຸເຄາະພິກຂຸສົງໃນບັດນີ້ ຄື ກັບທີ່ເຄີຍອະນຸເຄາະມາແລ້ວໃນຄັ້ງກ່ອນ ໆ ເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບ ລຳດັບນັ້ນ ທ້າວສະຫຳບໍດີພົມຮູ້ວ່າພຣະຜູ້ມີພຣະພາກເຈົ້າ ຊົງຮັບອາຣາດທະນາແລ້ວຈຶ່ງຖວາຍອະພິວາດ ທຳປະທັກຂິນແລ້ວຫາຍໂຕໄປ ໃນບ່ອນນັ້ນ ໆ ເອງ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກບ່ອນຫຼີບຫຼີກໃນເວລາຄໍ່າ ໄດ້ສະເດັດເຂົ້າໄປສູ່ນິໂຄຫາຣາມ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຊົງບັນດານດ້ວຍອິດທາພິສັງຂານ ໃຫ້ພິກຂຸເຫຼົ່ານັ້ນເກງກົວ ເຂົ້າໄປເຝົ້າເທື່ອລະອົງແດ່ ສອງອົງແດ່ ຕ່າງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບພິກຂຸເຫຼົ່ານັ້ນ ດັ່ງນີ້ ວ່າ

ພິກຂຸທັງຫຼາຍ ການທີ່ພິກຂຸທຸສິນທ່ຽວບິນທະບາດລ້ຽງຊີບນີ້ ເປັນການກະທຳທີ່ຕ່ຳຊາມ ການທີ່ພິກຂຸທຸສິນປະພຶດແນວນີ້ ຍ່ອມຖືກຊາວໂລກດ່າວ່າ ເຈົ້າຄົນນີ້ ອຸ້ມບາດທ່ຽວຂໍຊາວໂລກມາລ້ຽງຊີບ ກຸນລະບຸດຕ່າງໆເປັນຜູ້ຕະໜັກໃນເຫດ ອາໄສຄວາມຕະໜັກໃນເຫດຈຶ່ງເຂົ້າມາໃຊ້ຊີວິດທ່ຽວຂໍກ້ອນເຂົ້າ ບໍ່ແມ່ນຖືກພຣະຣາຊາຮັບສັ່ງໃຫ້ນຳໄປຄຸມຂັງ ບໍ່ແມ່ນຖືກພວກໂຈນນຳໄປກັກຂັງ ບໍ່ແມ່ນເປັນລູກໜີ້ ບໍ່ແມ່ນຕົກຢູ່ໃນຫ້ວງອັນຕະລາຍ ບໍ່ແມ່ນຈະຢຶດເປັນອາຊີບ ແທ້ທີ່ຈິງກຸນລະບຸດເຫຼົ່ານັ້ນ ເຂົ້າມາບວດດ້ວຍເຫດຜົນວ່າ ພວກເຮົາຕ່າງໆຖືກຊາດ (ຄວາມເກີດ) ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ທັບຖົມຄອບງຳ ຈົມປັກຢູ່ໃນທຸກ ສາລະວົນຢູ່ກັບທຸກ ເຮັດແນວໃດນໍ ການເຮັດບ່ອນສຸດແຫ່ງກອງທຸກທັງມວນນີ້ ຈະເພິ່ງຜາກົດໄດ້

ກຸນລະບຸດນີ້ ເປັນຜູ້ບວດດ້ວຍເຫດຜົນຕາມທີ່ກ່າວມາແລ້ວນັ້ນ ແຕ່ແລ້ວກຸນລະບຸດນັ້ນກັບເກີດຄວາມລະໂມບ ກຳໜັດຍິນດີຢ່າງແຮງກ້າໃນກາມ ມີຈິດພະຍາບາດ ຄິດປະທຸດສະຮ້າຍ ຫຼົງລືມສະຕິ ບໍ່ຮູ້ສຶກໂຕ ມີຈິດບໍ່ຕັ້ງໝັ້ນ ມີຈິດກະສັບກະສ່າຍ ບໍ່ສັງລວມອິນຊີ ບຸກຄົນຜູ້ເສື່ອມຈາກໂພຄະຂອງຄະຫຼືຫັດ ແລະ ບໍ່ສາມາດພ່ຳເພັງປະໂຫຍດສຳລັບຄວາມເປັນສະມະນະໃຫ້ບໍລິບູນໄດ້ ເຮົາຮຽກວ່າ ເປັນຄືຂອນໄມ້ທີ່ຖືກຖິ້ມໄວ້ໃນປ່າຊ້າ ໄຟໄໝ້ທັງ ໒ ຂ້າງ ທາງກາງເປື້ອນຄູດ ຍ່ອມບໍ່ອຳນວຍປະໂຫຍດເປັນເຄື່ອງເຮືອນ ທັງບໍ່ອຳນວຍປະໂຫຍດເປັນອຸປະກອນໃນປ່າໄດ້

ພິກຂຸທັງຫຼາຍ ອະກຸສົນວິຕົກ ໓ ປະການ ຄື

໑. ກາມວິຕົກ (ຄວາມນຶກໃນກາມ)
໒. ພະຍາບາດວິຕົກ (ຄວາມນຶກໃນພະຍາບາດ)
໓. ວິຫິງສາວິຕົກ (ຄວາມນຶກໃນການບຽດບຽນ)

ອະກຸສົນວິຕົກ ໓ ປະການນີ້ດັບບໍ່ເຫຼືອຢູ່ໃສ

ຄື ເມື່ອບຸກຄົນມີຈິດຕັ້ງໝັ້ນດີແລ້ວໃນສະຕິປັດຖານ ໔ ປະການ ຫຼື ຈະເລີນອະນິມິດຕະສະມາທິ ອະກຸສົນວິຕົກ ໓ ປະການ ຍ່ອມດັບໂດຍບໍ່ເຫຼືອ ອະນິມິດຕະສະມາທິຄວນແທ້ທີ່ບຸກຄົນຈະຈະເລີນ ເມື່ອອະນິມິດຕະສະມາທິທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ

ພິກຂຸທັງຫຼາຍ ທິດຖິ ໒ ປະການນີ້ ຄື

໑. ພະວະທິດຖິ (ຄວາມເຫັນໃນພົບ)
໒. ວິພະວະທິດຖິ (ຄວາມເຫັນໃນວິພົບ)

ອະຣິຍະສາວົກ ຜູ້ໄດ້ສະດັບພິຈາລະນາເຫັນໃນທິດຖິ ໔ ປະການນັ້ນແນວນີ້ວ່າ ເຮົາຍຶດຖືສິ່ງໃດຢູ່ ເພິ່ງເປັນຜູ້ບໍ່ມີໂທດ ສິ່ງນັ້ນມີຢູ່ໃນໂລກແດ່ບໍ? ທ່ານຮູ້ແຈ້ງແນວນີ້ວ່າ ເຮົາຍຶດຖືສິ່ງໃດຢູ່ ເພິ່ງເປັນຜູ້ບໍ່ມີໂທດ ສິ່ງນັ້ນບໍ່ມີໃນໂລກເລີຍ ກໍເຮົາເມື່ອຍຶດຖື ເພິ່ງຍຶດຖືຮູບ ເວທະນາ ສັນຍາ ສັງຂານ ວິນຍານນັ້ນເອງ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີແກ່ເຮົາ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ຈຶ່ງມີດ້ວຍປະການແນວນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງບໍ່ທ່ຽງ ฯລฯ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ປິນໂທລະຍະສູດທີ່ ๗ ຈົບ**

# ๘. ປາລິເລີຍຍະສູດ

## ວ່າດ້ວຍປ່າປາລິເລີຍຍະກະ

[๗໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ເມື່ອໃນເວລາເຊົ້າ ຊົງຄອງອັນຕະຣະວາສົກຖືບາດ ແລະຈີວອນ ສະເດັດເຂົ້າໄປບິນທະບາດໃນກຣຸງໂກສຳພີ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຊົງຖືຮັກສາເສນາສະນະດ້ວຍພຣະອົງເອງຖືບາດແລະຈີວອນ ບໍ່ໄດ້ຊົງຮັບສັ່ງພວກອຸປັດຖາກ ບໍ່ໄດ້ຕັດອຳລາພິກຂຸສົງ ສະເດັດຈາຣິກໄປພຣະອົງດຽວບໍ່ມີຜູ້ຕິດຕາມ

ລຳດັບນັ້ນ ພິກຂຸອົງໜຶ່ງ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ໄດ້ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ແລ້ວໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ພຣະຜູ້

ມີພຣະພາກເຈົ້າ ຊົງຖືຮັກສາເສນາສະນະດ້ວຍພຣະອົງເອງ ຖືບາດແລະຈີວອນພຣະອົງເອງ ບໍ່ໄດ້ຊົງຮັບສັ່ງໃຫ້ມີຜູ້ອຸປັດຖາກ ບໍ່ໄດ້ຕັດອຳລາພິກຂຸສົງ ສະເດັດຈາຣິກໄປພຣະອົງດຽວບໍ່ມີຜູ້ຕິດຕາມ

ທ່ານພຣະອານົນໄດ້ຕອບວ່າ ທ່ານຜູ້ມີອາຍຸ ສະໄໝໃດ ພຣະຜູ້ມີພຣະພາກເຈົ້າ ຊົງຖືຮັກສາເສນາສະນະດ້ວຍພຣະອົງເອງ ຖືບາດແລະຈີວອນພຣະອົງເອງ ບໍ່ໄດ້ຊົງຮັບສັ່ງໃຫ້ມີຜູ້ອຸປັດຖາກ ບໍ່ໄດ້ຕັດອຳລາພິກຂຸສົງ ສະເດັດຈາຣິກໄປພຣະອົງດຽວບໍ່ມີຜູ້ຕິດຕາມ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ມີພຣະປະສົງຈະປະທັບຢູ່ພຽງລຳພັງ ຈຶ່ງບໍ່ຄວນທີ່ໃຜ ໆ ຈະເພິ່ງຕິດຕາມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໂດຍລຳດັບ ເຖິງປ່າປາລິເລີຍຍະກະໄດ້ຂ່າວວ່າ ຢູ່ບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ເຫງົ້າໄມ້ຮັງອັນງາມ

ຕໍ່ມາ ພິກຂຸຈຳນວນຫຼາຍ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ພາກັນກ່າວກັບ ທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ດົນມາແລ້ວ ທີ່ພວກຂ້ານ້ອຍໄດ້ຟັງທຳມີກະຖາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ທ່ານອານົນ ພວກຂ້ານ້ອຍປາຖະໜາທີ່ຈະຟັງທຳມີກະຖາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ

ລຳດັບນັ້ນ ທ່ານພຣະອານົນ ພ້ອມດ້ວຍພິກຂຸເຫຼົ່ານັ້ນ ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຢູ່ເຫງົ້າໄມ້ຮັງອັນງາມ ໃນປ່າປາລິເລີຍຍະກະ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ພິກຂຸເຫຼົ່ານັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣວຍຣຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ສະໄໝນັ້ນ ພິກຂຸອົງໜຶ່ງໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ ເມື່ອບຸກຄົນຮູ້ ເຫັນແນວໃດອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄວາມຄິດຄຳນຶງຂອງພິກຂຸນັ້ນ ດ້ວຍພຣະຫະໄທຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ເຮົາໄດ້ສະແດງທຳໂດຍການວິໄຈ (ການຄັດເລືອກ) ສະແດງສະຕິປັດຖານ ໔ ປະການໂດຍການວິໄຈ ສະແດງສຳມັບປະທານ ໔ ປະການໂດຍການວິໄຈ ສະແດງອິດທິບາດ ໔ ປະການໂດຍການວິໄຈ ສະແດງອິນຊີ ໕ ປະການໂດຍການວິໄຈ ສະແດງພະລະ ໕ ປະການໂດຍການວິໄຈ ສະແດງໂພດຊົງ ໗ ປະການໂດຍການວິໄຈ ສະແດງອະຣິຍະມັກມີອົງ ໘ ໂດຍການວິໄຈ ພິກຂຸທັງຫຼາຍ ເຮົາໄດ້ສະແດງທຳໂດຍການວິໄຈແນວນີ້ ທຳອັນເຮົາສະແດງແລ້ວໂດຍການວິໄຈແນວນີ້ ແຕ່ຍັງມີພິກຂຸລາງອົງໃນທຳວິໄນນີ້ ເກີດຄວາມຄິດຄຳນຶງວ່າ

ເມື່ອບຸກຄົນຮູ້ ເຫັນແນວໃດ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ເມື່ອບຸກຄົນຮູ້ ເຫັນແນວໃດ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ກໍການພິຈາລະນາເຫັນນັ້ນຈັດເປັນສັງຂານ ສັງຂານນັ້ນມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຄື ສັງຂານນັ້ນເກີດຈາກຕັນຫາທີ່ເກີດຂື້ນແກ່ປຸຖຸຊົນຜູ້ບໍ່ໄດ້ສະດັບ ຜູ້ຖືກຄວາມສະເຫວີຍອາລົມທີ່ເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ຍ້ອນເຫດນັ້ນ ແມ່ນສັງຂານນັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ແມ່ນຕັນຫານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂື້ນ ແມ່ນເວທະນານັ້ນ ຯລຯ ແມ່ນຜັດສະນັ້ນ ຯລຯ ແມ່ນອະວິດຊານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂື້ນ ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ປຸຖຸຊົນບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ແຕ່ພິຈາລະນາເຫັນອັດຕາວ່າມີຮູບ ກໍການພິຈາລະນາເຫັນນັ້ນ ຈັດເປັນສັງຂານ

ສັງຂານນັ້ນ ມີອັນໃດ? ເປັນເຫດ ມີມີອັນໃດ? ເປັນເຫດເກີດ ມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ

ຄື ສັງຂານນັ້ນ ເກີດຈາກຕັນຫາທີ່ເກີດຂື້ນແກ່ປຸຖຸຊົນຜູ້ບໍ່ໄດ້ສະດັບ ຜູ້ຖືກຄວາມສະເຫວີຍອາລົມທີ່ເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ຍ້ອນເຫດນັ້ນ ແມ່ນສັງຂານນັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂື້ນ ແມ່ນຕັນຫານັ້ນ ຯລຯ ແມ່ນເວທະນານັ້ນ ຯລຯ ແມ່ນຜັດສະນັ້ນ ຯລຯ ແມ່ນອະວິດຊານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂື້ນ

ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ປຸຖຸຊົນ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ແຕ່ພິຈາລະນາເຫັນຮູບໃນອັດຕາ ກໍການພິຈາລະນາເຫັນນັ້ນ ຈັດເປັນສັງຂານ

ສັງຂານນັ້ນ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ

ຄື ສັງຂານນັ້ນ ເກີດຈາກຕັນຫາທີ່ເກີດຂື້ນແກ່ປຸຖຸຊົນຜູ້ບໍ່ໄດ້ສະດັບ ຜູ້ຖືກຄວາມສະເຫວີຍອາລົມທີ່ເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ຍ້ອນເຫດນັ້ນ ແມ່ນສັງຂານນັ້ນກໍບໍ່

ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ແມ່ນຕັນຫານັ້ນ ຯລຯ ແມ່ນເວທະນານັ້ນ ຯລຯ ແມ່ນຜັດສະນັ້ນ ຯລຯ ແມ່ນອະວິດຊານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ປຸຖຸຊົນ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ແຕ່ພິຈາລະນາເຫັນອັດຕາໃນຮູບ ກໍການພິຈາລະນາເຫັນນັ້ນຈັດເປັນສັງຂານ

ສັງຂານນັ້ນ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ

ຄື ສັງຂານນັ້ນ ເກີດຈາກຕັນຫາທີ່ເກີດຂຶ້ນແກ່ປຸຖຸຊົນຜູ້ບໍ່ໄດ້ສະດັບ ຜູ້ຖືກຄວາມສະເຫວີຍອາລົມທີ່ເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ຍ້ອນເຫດນັ້ນ ແມ່ນສັງຂານນັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ແມ່ນຕັນຫານັ້ນ ຯລຯ ແມ່ນເວທະນານັ້ນ ຯລຯ ແມ່ນຜັດສະນັ້ນ ຯລຯ ແມ່ນອະວິດຊານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ

ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ປຸຖຸຊົນ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍ່ພິຈາລະນາເຫັນອັດຕາໃນຮູບ ແຕ່ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີເວທະນາ ພິຈາລະນາເຫັນເວທະນາໃນອັດຕາ ພິຈາລະນາເຫັນອັດຕາໃນເວທະນາ ພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາ ຯລຯ ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີສັງຂານ ພິຈາລະນາເຫັນສັງຂານໃນອັດຕາ ພິຈາລະນາເຫັນອັດຕາໃນສັງຂານ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ພິຈາລະນາເຫັນອັດຕາໃນວິນຍານ ກໍການພິຈາລະນາເຫັນນັ້ນຈັດເປັນສັງຂານ

ສັງຂານນັ້ນ ມີອັນໃດ? ເປັນເຫດ ຯລຯ ມີອັນໃດ? ເປັນແດນເກີດ

ຄື ສັງຂານນັ້ນ ເກີດຈາກຕັນຫາທີ່ເກີດຂຶ້ນແກ່ປຸຖຸຊົນຜູ້ບໍ່ໄດ້ສະດັບ ຜູ້ຖືກຄວາມສະເຫວີຍອາລົມທີ່ເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ຍ້ອນເຫດນັ້ນ ແມ່ນສັງຂານນັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ແມ່ນຕັນຫານັ້ນ ຯລຯ ແມ່ນເວທະນານັ້ນ ຯລຯ ແມ່ນຜັດສະນັ້ນ ຯລຯ ແມ່ນອະວິດຊານັ້ນ ກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ

ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ປຸຖຸຊົນ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນເວທະນາ ຯລຯ ບໍ່ພິຈາລະນາເຫັນສັນຍາ ຯລຯ ບໍ່ພິຈາລະນາເຫັນສັງຂານ ຯລຯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ແຕ່ມີທິດຖິ (ຄວາມເຫັນ) ແນວນີ້ວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວ ຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ກໍສັດສະຕະທິດຖິ (ຄວາມເຫັນວ່າທ່ຽງ) ນັ້ນຈັດເປັນສັງຂານ

ສັງຂານນັ້ນ ມີອັນໃດ? ເປັນເຫດ ຯລຯ

ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ປຸຖຸຊົນ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນເວທະນາ ຯລຯ ບໍ່ພິຈາລະນາເຫັນສັນຍາ ຯລຯ ບໍ່ພິຈາລະນາເຫັນສັງຂານ ຯລຯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ທັງບໍ່ມີທິດຖິແນວນີ້ວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວ ຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ແຕ່ມີທິດຖິແນວນີ້ວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ ກໍອຸດເສທະທິດຖິ (ຄວາມເຫັນວ່າຂາດສູນ) ນັ້ນຈັດເປັນສັງຂານ

ສັງຂານນັ້ນ ມີອັນໃດ? ເປັນເຫດ ມີອັນໃດ? ເປັນເຫດເກີດມີອັນໃດ? ເປັນກຳເນີດ ມີອັນໃດ? ເປັນແດນເກີດ

ຄື ສັງຂານນັ້ນ ເກີດຈາກຕັນຫາທີ່ເກີດຂື້ນແກ່ປຸຖຸຊົນຜູ້ບໍ່ໄດ້ສະດັບ ຜູ້ຖືກຄວາມສະເຫວີຍອາລົມທີ່ເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ຍ້ອນເຫດນັ້ນ ແມ່ນສັງຂານນັ້ນກໍບໍ່ທ່ຽງ ຯລຯ

ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

ປຸຖຸຊົນ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນເວທະນາ ຯລຯ ບໍ່ພິຈາລະນາເຫັນສັນຍາ ຯລຯ ບໍ່ພິຈາລະນາເຫັນສັງຂານ ຯລຯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ຯລຯ ບໍ່ພິຈາລະນາເຫັນອັດຕາໃນວິນຍານ ທັງບໍ່ມີທິດຖິແນວນີ້ວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທັງບໍ່ມີທິດຖິແນວນີ້ວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ ແຕ່ຍັງມີຄວາມສົງໄສ ເຄືອບແຄງ ບໍ່ແນ່ໃຈໃນສັດທຳ ກໍຄວາມເປັນຜູ້ສົງໄສ ເຄືອບແຄງ ບໍ່ແນ່ໃຈໃນສັດທຳນັ້ນ ຈັດເປັນສັງຂານ

ສັງຂານນັ້ນ ມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ

ຄື ສັງຂານນັ້ນ ເກີດຈາກຕັນຫາທີ່ເກີດຂຶ້ນແກ່ປຸຖຸຊົນຜູ້ບໍ່ໄດ້ສະດັບ ຜູ້ຖືກຄວາມສະເຫວີຍອາລົມທີ່ເກີດຈາກອະວິດຊາສຳຜັດຖືກຕ້ອງແລ້ວ ຍ້ອນເຫດນັ້ນ ແມ່ນສັງຂານນັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ແມ່ນຕັນຫານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງອາໄສປັດໄຈເກີດຂຶ້ນ ແມ່ນເວທະນານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ແມ່ນຜັດສະນັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ແມ່ນອະວິດຊານັ້ນກໍບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ

ພິກຂຸທັງຫຼາຍ ເມື່ອບຸກຄົນຮູ້ ເຫັນແນວນີ້ ອາສະວະທັງຫຼາຍ ຈຶ່ງໝົດໄປໂດຍລຳດັບ

**ປາລິເລີຍຍະສູດທີ ໙ ຈົບ**

# ໑໐. ປຸນນະມະສູດ

## ວ່າດ້ວຍພຣະທຳເທດສະໜາໃນຄືນດວງຈັນເຕັມດວງ

[໘໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ຜາສາດຂອງນາງວິສາຂາ

ມິຄາຣະມາຕາ ໃນບຸບພາຣາມ ເຂດນະຄອນສາວັດຖີ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ສະໄໝນັ້ນ ໃນມື້ອຸໂປສົດຂຶ້ນ ໑໕ ຄ່ຳ ຄືນດວງຈັນເຕັມດວງ ພຣະຜູ້ມີພຣະພາກເຈົ້າ ຊົງມີພິກຂຸສົງຮ້ອມລ້ອມ ປະທັບນັ່ງຢູ່ກາງແຈ້ງ

ຄັ້ງນັ້ນ ພິກຂຸອົງໜຶ່ງ ລຸກຈາກອາສະນະ ຫົ່ມຜ້າບ່ຽງບ່າປະນົມມືໄປທາງທີ່ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງ

ຜູ້ຈະເລີນ ຂ້າພຣະອົງ ຂໍທູນຖາມເຫດແນວໜຶ່ງກັບພຣະອົງ ຖ້າພຣະຜູ້ມີພຣະພາກເຈົ້າຊົງປະທານວະໂຣກາດທີ່ຈະຕອບບັນຫາແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຖ້າເຊັ່ນນັ້ນ ທ່ານຈົ່ງນັ່ງເທິງອາສະນະຂອງຕົນແລ້ວຖາມບັນຫາທີ່ທ່ານຕ້ອງການຈະຖາມມາເທີ້ນ

ພິກຂຸນັ້ນ ທູນຮັບພຣະດຳຣັດແລ້ວ ນັ່ງເທິງອາສະນະຂອງຕົນໄດ້ທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາທານຂັນ ໕ ປະການ ເປັນແນວນີ້ແມ່ນບໍ? ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)

໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ພິກຂຸ ອຸປາທານຂັນ ໕ ປະການ ເປັນແນວນີ້ແລ ຄື

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

## ມູນເຫດແຫ່ງອຸປາທານຂັນ ໕ ປະການ

ພິກຂຸນັ້ນ ຊົມຊື່ນ ຍິນດີ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ ສາທຸ ຂ້ານ້ອຍ ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອຸປາທານຂັນ ໕ ປະການນີ້ ມີອັນໃດ? ເປັນມູນເຫດ

ພິກຂຸ ອຸປາທານຂັນ ໕ ປະການນີ້ ມີສັນທະເປັນມູນເຫດ ຯລຯ

ອຸປາທານກັບອຸປາທານຂັນ ໕ ປະການເປັນແນວດຽວກັນ ຫຼື ວ່າ ອຸປາທານເປັນແນວ ອື່ນນອກຈາກອຸປາທານຂັນ ໕ ປະການ ຂ້ານ້ອຍ?

ພິກຂຸ ອຸປາທານກັບອຸປາທານຂັນ ໕ ປະການເປັນແນວດຽວກັນກໍບໍ່ແມ່ນ ທັງອຸປາທານ ເປັນແນວອື່ນນອກຈາກອຸປາທານຂັນ ໕ ປະການກໍບໍ່ແມ່ນ ແຕ່ສັນທະຣາຄະໃນອຸປາທານຂັນ ໕ ປະການນັ້ນ ເປັນໂຕອຸປາທານ

## ສັນທະຣາຄະໃນອຸປາທານຂັນ ໕ ປະການ

ພິກຂຸນັ້ນ ຯລຯ ໄດ້ທູນຖາມບັນຫາຍິ່ງຂຶ້ນໄປອີກວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກໍສັນທະຣາຄະຕ່າງ ໆ ໃນອຸປາທານຂັນ ໕ ປະການ ຈະເພິ່ງມີໄດ້ແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເພິ່ງມີໄດ້ ພິກຂຸ ແລ້ວໄດ້ຕັດຕໍ່ໄປວ່າ ພິກຂຸ ບຸກຄົນ ລາງຄົນໃນໂລກນີ້ມີຄວາມປາຖະໜາແນວນີ້ວ່າ ໃນອະນາຄົດຕະການ ຂໍເຮົາເພິ່ງມີຣູບແນວນີ້ ມີເວທະນາແນວນີ້ ມີສັນຍາແນວນີ້ ມີສັງຂານແນວນີ້ ມີວິນຍານແນວນີ້

ພິກຂຸ ສັນທະຣາຄະຕ່າງ ໆ ໃນອຸປາທານຂັນ ໕ ປະການ ຈະເພິ່ງມີໄດ້ຢ່າງນີ້ແລ

## ເຫດທີ່ຮຽກວ່າຂັນ

ພິກຂຸນັ້ນ ຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ວ່າ ສາທຸ ຂ້ານ້ອຍ ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປອີກ ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດພຽງທໍ່ໃດ? ຂັນ ຈຶ່ງຊື່ວ່າຂັນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ນີ້ຮຽກວ່າ ຮູບຂັນ

ເວທະນາແນວໃດແນວໜຶ່ງ ຯລຯ

ສັນຍາແນວໃດແນວໜຶ່ງ ຯລຯ

ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ນີ້ຮຽກວ່າ ວິນຍານຂັນ

ພິກຂຸ ດ້ວຍເຫດພຽງທໍ່ນີ້ ຂັນຈຶ່ງຊື່ວ່າຂັນ

## ເຫດປັດໄຈແຫ່ງຂັນ

ພິກຂຸນັ້ນ ຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ ສາທຸ ຂ້ານ້ອຍ ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປວ່າ ຂ້າແດ່ ພຣະອົງຜູ້ຈະເລີນອັນໃດ? ເປັນເຫດເປັນປັດໄຈເຮັດໃຫ້ຮູບຂັນຜາກົດ ອັນໃດ? ເປັນເຫດເປັນປັດໄຈເຮັດໃຫ້ເວທະນາຂັນຜາກົດ ອັນໃດ? ເປັນເຫດເປັນປັດໄຈເຮັດໃຫ້ສັນຍາຂັນຜາກົດ ອັນໃດ? ເປັນເຫດເປັນປັດໄຈເຮັດໃຫ້ສັງຂານຂັນຜາກົດ ອັນໃດ? ເປັນເຫດເປັນປັດໄຈເຮັດໃຫ້ວິນຍານຂັນຜາກົດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ມະຫາພູຕະຮູບ ໔ ເປັນເຫດເປັນປັດໄຈເຮັດໃຫ້ຮູບຂັນຜາກົດ ຜັດສະເປັນເຫດເປັນປັດໄຈເຮັດໃຫ້ເວທະນາຂັນຜາກົດ ຜັດສະເປັນເຫດເປັນປັດໄຈເຮັດໃຫ້ສັນຍາຂັນຜາກົດ ຜັດສະເປັນເຫດເປັນປັດໄຈເຮັດໃຫ້ສັງຂານຂັນຜາກົດ ນາມຮູບເປັນເຫດເປັນປັດໄຈເຮັດໃຫ້ວິນຍານຂັນຜາກົດ

## ເຫດເກີດສັກກາຍະທິດຖິ

ພິກຂຸນັ້ນ ຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ ສາທຸ ຂ້ານ້ອຍ ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ສັກກາຍະທິດຖິມີໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາ ເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ

ພິກຂຸ ສັກກາຍະທິດຖິມີໄດ້ແນວນີ້

## ເຫດບໍ່ມີສັກກາຍະທິດຖິ

ພິກຂຸນັ້ນ ຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ ສາທຸ ຂ້ານ້ອຍ ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ສັກກາຍະທິດຖິມີບໍ່ໄດ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ອະຣິຍະສາວົກໃນທຳວິໄນນີ້ ຜູ້ໄດ້ສະດັບໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ ບໍ່ພິຈາລະນາເຫັນເວທະນາ ຯລຯ ບໍ່ພິຈາລະນາເຫັນສັນຍາ ຯລຯ ບໍ່ພິຈາລະນາເຫັນສັງຂານ ຯລຯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ

ພິກຂຸ ສັກກາຍະທິດຖິມີບໍ່ໄດ້ຢ່າງນີ້

## ຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ

ພິກຂຸນັ້ນ ຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ ສາທຸ ຂ້ານ້ອຍ ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດ? ເປັນຄຸນ ອັນໃດ? ເປັນໂທດ ອັນໃດ? ເປັນເຄື່ອງສະບັດອອກຈາກຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ອັນໃດ? ເປັນຄຸນ ອັນໃດ? ເປັນໂທດ ອັນໃດ? ເປັນເຄື່ອງສະບັດອອກຈາກວິນຍານ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ສະພາບທີ່ສຸກໂສມະນັດອາໄສຮູບເກີດຂຶ້ນ ນີ້ເປັນຄຸນຂອງຮູບ ສະພາບທີ່ຮູບບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງ

ຮູບ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນຮູບ ນີ້ເປັນເຄື່ອງສະບັດອອກຈາກຮູບ

ສະພາບທີ່ສຸກໂສມະນັດອາໄສເວທະນາເກີດຂຶ້ນ ฯລฯ ອາໄສສັນຍາເກີດຂຶ້ນ ฯລฯ ອາໄສສັງຂານເກີດຂຶ້ນ ฯລฯ ສະພາບທີ່ສຸກໂສມະນັດອາໄສວິນຍານເກີດຂຶ້ນ ນີ້ເປັນຄຸນຂອງວິນຍານ ສະພາບທີ່ວິນຍານບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງວິນຍານ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນວິນຍານ ນີ້ເປັນເຄື່ອງສະບັດອອກຈາກວິນຍານ

## ຄວາມບໍ່ມີອະຫັງການ ມະມັງການແລະມານານຸໄສ

ພິກຂຸນັ້ນຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າວ່າ ສາທຸ ຂ້ານ້ອຍ ແລ້ວໄດ້ທູນຖາມບັນຫາຍິ່ງຂຶ້ນໄປວ່າ ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ ເຫັນແນວໃດຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະໃນນິມິດທັງປວງໃນພາຍນອກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ພິກຂຸນັ້ນ ພິຈາລະນາເຫັນຮູບທັງໝົດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ແນວໃດແນວໜຶ່ງ ฯລฯ
ສັນຍາ ແນວໃດແນວໜຶ່ງ ฯລฯ
ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ฯລฯ

ວິນຍານ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ພິກຂຸນັ້ນ ພິຈາລະນາເຫັນວິນຍານທັງໝົດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸ ເມື່ອບຸກຄົນຮູ້ ເຫັນແນວນີ້ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະ ໃນນິມິດທັງປວງໃນພາຍນອກ

## ກຳທີ່ອະນັດຕາເຮັດຖືກຕ້ອງອັດຕາ

ສະໄໝນັ້ນ ພິກຂຸອົງໜຶ່ງໄດ້ເກີດຄວາມຄິດຄຳນຶງແນວນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຮູບເປັນອະນັດຕາ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນ

ອະນັດຕາ ຍ້ອນເຫດນັ້ນ ກໍາທີ່ຖືກອະນັດຕາເຮັດຈັກຖືກຕ້ອງອັດຕາໄດ້ແນວໃດ?

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ຄວາມຄິດຄໍານຶງຂອງພິກຂຸນັ້ນ ດ້ວຍພຣະຫະໄທ ແລ້ວ ໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ເປັນໄປໄດ້ທີ່ໂມຄະບຸຣຸດລາງຄົນໃນທໍາວິໄນນີ້ ເປັນຜູ້ບໍ່ຮູ້ແຈ້ງ ຕົກຢູ່ໃນອໍານາດອະວິດຊາ ມີໃຈຖືກຕັນຫາຄອບງໍາ ຈະເພິ່ງເຂົ້າໃຈສັດຖຸສາດວ່າ ເປັນຄໍາສອນທີ່ຄວນຄິດ ໃຫ້ຄິດວ່າ ທ່ານຜູ້ຈະເລີນທັງຫຼາຍ ໄດ້ຂ່າວວ່າ ຮູບເປັນອະນັດຕາ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນອະນັດຕາ ຍ້ອນເຫດນັ້ນ ກໍາທີ່ຖືກອະນັດຕາເຮັດຈັກຖືກຕ້ອງອັດຕາໄດ້ແນວໃດ?

ພິກຂຸທັງຫຼາຍ ເຮົາໄດ້ແນະນໍາທ່ານທັງຫຼາຍໄວ້ແລ້ວດ້ວຍການສອບຖາມໃນທໍາເຫຼົ່ານັ້ນ ໃນບາລີນັ້ນ ໆ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ຍ້ອນເຫດນັ້ນແລ ฯລฯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ມີພິກຂຸທູນຖາມບັນຫາກັບພຣະຜູ້ມີພຣະພາກເຈົ້າໃນເລື້ອງຕໍ່ໄປນີ້ອີກ ຄື

໑. ເລື້ອງຂັນ ໕

໒. ເລື້ອງມູນເຫດແຫ່ງຂັນ ໕

໓. ເລື້ອງສັບທະຣາຄະ

໔. ເລື້ອງຊື່ຂອງຂັນ ໕

໕. ເລື້ອງເຫດປັດໄຈແຫ່ງການບັນຍັດຂັນ ໕

໖. ເລື້ອງສັກກາຍະທິດຖິ

໗. ເລື້ອງເຫດບໍ່ມີສັກກາຍະທິດຖິ

໙. ເລື້ອງຄຸນ ໂທດ ແລະເຄື່ອງສະບັດອອກຈາກຂັນ ໕
໘. ເລື້ອງບໍ່ມີອະທັງການ ມະມັງການ ແລະມານານຸໄສ
໑໐. ເລື້ອງກຳທີ່ອະນັດຕາກະທຳຖືກຕ້ອງອັດຕາ

ລວມບັນຫາທີ່ທູນຖາມ ໑໐ ຂໍ້ໄວ້ນຳກັນ

**ປຸນນະມະສູດທີ ໑໐ ຈົບ**

**ຂັດຊະນີຍະວັກທີ ໓ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ອັດສາທະສູດ
໒. ທຸຕິຍະສະມຸທະຍະສູດ
໕. ທຸຕິຍະອະຣະຫັນຕະສູດ
໗. ຂັດຊະນີຍະສູດ
໘. ປາລິເລີຍຍະສູດ
໔. ສະມຸທະຍະສູດ
໔. ອະຣະຫັນຕະສູດ
໖. ສີຫະສູດ
໙. ປິນໂທລະຍະສູດ
໑໐. ປຸນນະມະສູດ

# ໔. ເຖຣະວັກ

## ໝວດວ່າດ້ວຍພຣະເຖຣະ

# ໑. ອານັນທະສູດ

## ວ່າດ້ວຍພຣະອານົນ

[໘໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຢູ່ບ່ອນນັ້ນ ທ່ານພຣະອານົນ ໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ທ່ານຜູ້ມີອາຍຸ ເມື່ອທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ທ່ານຜູ້ມີອາຍຸທັງຫຼາຍ ທ່ານພຣະປຸນນະມັນຕານີບຸດ ມີອຸປະກາຣະຫຼາຍແກ່ພວກເຮົາຜູ້ເປັນພິກຂຸໃໝ່ ທ່ານກ່າວສອນພວກເຮົາດ້ວຍໂອວາດແນວນີ້ວ່າ ທ່ານອານົນ ຍ້ອນຖືໝັ້ນ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງມີ ຍ້ອນບໍ່ຖືໝັ້ນ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງບໍ່ມີ

ຍ້ອນຖືໝັ້ນ ອັນໃດ? ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງມີ ຍ້ອນບໍ່ຖືໝັ້ນອັນໃດ? ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງບໍ່ມີ

ຄື ຍ້ອນຖືໝັ້ນຮູບ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງມີ ຍ້ອນບໍ່ຖືໝັ້ນຮູບ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງບໍ່ມີ ฯลฯ ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ຍ້ອນຖືໝັ້ນວິນຍານ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງມີ ຍ້ອນບໍ່ຖືໝັ້ນວິນຍານ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງບໍ່ມີ

ທ່ານອານົນ ສະຕີຫຼືບຸຣຸດ ຜູ້ມັກແຕ່ງໂຕ ແນມເບິ່ງເງົາໜ້າຂອງຕົນໃນແກ້ວ ຫຼື ພາຊະນະນ້ຳທີ່ໃສສະອາດບໍລິສຸດ ຍ້ອນອາໄສ (ແກ້ວຫຼືພາຊະນະນ້ຳນັ້ນ) ຈຶ່ງເຫັນ ຍ້ອນບໍ່ອາໄສຈຶ່ງບໍ່ເຫັນ ແມ່ນສັນໃດ ຂໍ້ນີ້ກໍຄືກັນສັນນັ້ນ ຍ້ອນຖືໝັ້ນຮູບ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງມີ ຍ້ອນບໍ່ຖືໝັ້ນຮູບ ຕັນຫາ ມານະ ທິດຖິ ວ່າ ເຮົາມີ ຈຶ່ງບໍ່ມີ ฯลฯ ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ຍ້ອນຖືໝັ້ນວິນຍານ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງມີ ຍ້ອນບໍ່ຖືໝັ້ນວິນຍານ ຕັນຫາ ມານະ ທິດຖິວ່າ ເຮົາມີ ຈຶ່ງບໍ່ມີ

ທ່ານອານົນ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບທ່ຽງຫຼືບໍ່ທ່ຽງ??
ບໍ່ທ່ຽງ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຍ້ອນເຫດນັ້ນແລ ຯລຯ ພຣະອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ທ່ານຜູ້ມີອາຍຸທັງຫຼາຍ ທ່ານພຣະປຸນນະມັນຕານີບຸດເປັນຜູ້ມີອຸປະກາຣະຫຼາຍແກ່ພວກເຮົາຜູ້ເປັນພິກຂຸໃໝ່ ທ່ານສອນພວກເຮົາດ້ວຍໂອວາດນີ້ ຍ້ອນຟັງທຳມະເທດສະໜານີ້ຂອງທ່ານພຣະປຸນນະມັນຕານີບຸດ ຂ້ານ້ອຍຈຶ່ງໄດ້ບັນລຸທຳ

**ອານັນທະສູດທີ ໑ ຈົບ**

# ໘. ຕິດສະສູດ

## ວ່າດ້ວຍພຣະຕິດສະ

[໘໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ສະໄໝນັ້ນ ທ່ານພຣະຕິດສະໂອຣົດພຣະປິຕຸດສາຂອງພຣະຜູ້ມີພຣະພາກເຈົ້າ ບອກແກ່ພິກຂຸຈຳນວນຫຼາຍແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ຮ່າງກາຍຂອງຂ້ານ້ອຍອ່ອນເປ້ຍເໝືອນຄົນເມົາ ຂ້ານ້ອຍຮູ້ສຶກມືດທຸກດ້ານ ແມ່ນທຳທັງຫຼາຍກໍບໍ່ຜາກົດ ຖີນະມິດທະຄອບງຳຈິດຂອງຂ້ານ້ອຍ ຂ້ານ້ອຍບໍ່ຍິນດີປະພຶດພົມມະຈັນ ແລະ ຍັງມີຄວາມສົງໄສໃນທຳທັງຫຼາຍຢູ່

ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະຕິດສະໂອຣົດພຣະປິຕຸດສາຂອງພຣະຜູ້ມີພຣະພາກເຈົ້າ ບອກແກ່ພິກຂຸທັງຫຼາຍແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ຮ່າງກາຍຂອງຂ້ານ້ອຍອ່ອນເປ້ຍເໝືອນຄົນເມົາ ຂ້ານ້ອຍຮູ້ສຶກມືດທຸກດ້ານ ແມ່ນທຳທັງຫຼາຍກໍບໍ່ຜາກົດ ຖີນະມິດທະຄອບງຳຈິດຂອງຂ້ານ້ອຍ ຂ້ານ້ອຍບໍ່ຍິນດີປະພຶດພົມມະຈັນ ແລະ ຍັງມີຄວາມສົງໄສໃນທຳທັງຫຼາຍຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຮັບສັ່ງຮຽກພິກຂຸອົງໜຶ່ງມາຕັດວ່າ ພິກຂຸ ທ່ານຈົ່ງໄປຮຽກ ຕິດສະພິກຂຸມາຕາມຄຳຂອງເຮົາ

ພິກຂຸນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາທ່ານພຣະຕິດສະຮອດບ່ອນຢູ່ແລ້ວໄດ້ບອກວ່າ ທ່ານຕິດສະ ພຣະສາດສະດາຮັບສັ່ງໃຫ້ທ່ານເຂົ້າເຝົ້າ

ທ່ານພຣະຕິດສະຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ຕິດສະ ຮູ້ວ່າ ທ່ານໄດ້ບອກແກ່ພິກຂຸຈຳນວນຫຼາຍວ່າ ທ່ານຜູ້ມີອາຍຸທັງຫຼາຍ ຮ່າງກາຍຂອງຂ້ານ້ອຍອ່ອນເປ້ຍເໝືອນຄົນເມົາ ຯລຯ ແລະຍັງມີຄວາມສົງໄສໃນທຳທັງຫຼາຍຢູ່ ແມ່ນບໍ?

ທ່ານພຣະຕິດສະທູນຕອບວ່າ ແມ່ນແລ້ວ ຂ້ານ້ອຍ

ຕິດສະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ເມື່ອບຸກຄົນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນຮູບ ຍ້ອນຮູບນັ້ນ ຜັນແປແລະເປັນແນວອື່ນ ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ຈຶ່ງເກີດຂຶ້ນ ແມ່ນບໍ່?

ແມ່ນ ຂ້ານ້ອຍ

ດີແລ້ວ ດີແລ້ວ ຕິດສະ ເລື້ອງນີ້ເປັນແນວນັ້ນ ເມື່ອບຸກຄົນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຯລຯ ໃນຮູບ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຍ້ອນສັງຂານເຫຼົ່ານັ້ນຜັນແປ ແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງເກີດຂຶ້ນແມ່ນບໍ່

ແມ່ນ ຂ້ານ້ອຍ

ດີແລ້ວ ດີແລ້ວ ຕິດສະ ເລື້ອງນີ້ເປັນແນວນັ້ນ ເມື່ອບຸກຄົນຜູ້ຍັງບໍ່ປາສະຈາກຄວາມ

ກຳໜັດ ຯລຯ ໃນສັງຂານ ຯລຯ ເມື່ອບຸກຄົນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນວິນຍານ ຍ້ອນວິນຍານນັ້ນຜັນແປ ແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງເກີດຂຶ້ນແມ່ນບໍ່

ແມ່ນ ຂ້ານ້ອຍ

ດີແລ້ວ ດີແລ້ວ ຕິດສະ ເລື້ອງນີ້ເປັນແນວນັ້ນ ເມື່ອບຸກຄົນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຯລຯ ໃນວິນຍານ ຯລຯ ຕິດສະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ເມື່ອບຸກຄົນຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນຮູບ ຍ້ອນຮູບນັ້ນຜັນແປແລະເປັນ

ແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດຂຶ້ນ ແມ່ນບໍ່?

ບໍ່ແມ່ນ ຂ້ານ້ອຍ

ດີແລ້ວ ດີແລ້ວ ຕິດສະ ເລື້ອງນີ້ເປັນແນວນັ້ນ ເມື່ອບຸກຄົນຜູ້ປາສະຈາກຄວາມກຳໜັດ ຯລຯ ໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ເມື່ອບຸກຄົນຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນວິນຍານ ຍ້ອນວິນຍານນັ້ນຜັນແປ ແລະເປັນແນວອື່ນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງເກີດຂຶ້ນ ແມ່ນບໍ່?

ບໍ່ແມ່ນ ຂ້ານ້ອຍ

ດີແລ້ວ ດີແລ້ວ ຕິດສະ ເລື້ອງນີ້ເປັນແນວນັ້ນ ເມື່ອບຸກຄົນຜູ້ປາສະຈາກຄວາມກຳໜັດ ຯລຯ ໃນວິນຍານ ຯລຯ ຕິດສະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຍ້ອນເຫດນັ້ນແລ ຯລຯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຕິດສະ ປຽບຄື ບຸຣຸດ ໒ ຄົນ ຄົນໜຶ່ງບໍ່ສະຫຼາດໃນຫົນທາງ ຄົນໜຶ່ງສະຫຼາດໃນຫົນທາງ ບຸຣຸດຜູ້ບໍ່ສະຫຼາດໃນຫົນທາງ ເພິ່ງຖາມທາງກັບບຸຣຸດຜູ້ສະຫຼາດໃນຫົນທາງ ບຸຣຸດຜູ້ສະຫຼາດໃນຫົນທາງເພິ່ງຕອບວ່າ ຜູ້ຈະເລີນ ທ່ານໄປຕາມທາງນີ້ອີກຈັກໜ້ອຍກໍຈັກພົບທາງ ໒ ແຍກ ໃນທາງ ໒ ແຍກນັ້ນ ທ່ານຈຶ່ງເວັ້ນທາງຊ້າຍ ໄປທາງຂວາເທີ້ນ ໄປຕາມທາງນັ້ນອີກຈັກໜ້ອຍກໍຈັກພົບປ່າໜາທຶບ ໄປຕາມທາງນັ້ນອີກຈັກໜ້ອຍກໍຈັກພົບບ່ອນຫຼຸບໃຫຍ່ມີຕົມ ໄປຕາມທາງນັ້ນອີກຈັກໜ້ອຍກໍຈັກພົບໜອງທີ່ເລິກ ໄປຕາມທາງນັ້ນອີກຈັກໜ້ອຍກໍຈັກພົບພື້ນທີ່ງຮາບໜ້າອອນຊອນ

ຕິດສະ ອຸປະມານີ້ເຮົາຍົກມາ ເພື່ອໃຫ້ເຂົ້າໃຈເນື້ອຄວາມແຈ່ງຊັດ ໃນອຸປະມານັ້ນມີອະທິບາຍດັ່ງນີ້

ຄຳວ່າ ບຸຣຸດຜູ້ບໍ່ສະຫຼາດໃນຫົນທາງ ນີ້ເປັນຄຳຮຽກ ປຸຖຸຊົນ

ຄຳວ່າ ບຸຣຸດຜູ້ສະຫຼາດໃນຫົນທາງ ນີ້ເປັນຄຳຮຽກ ຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ

ຄຳວ່າ ທາງ ໔ ແຍກ ນີ້ເປັນຄຳຮຽກ ວິຈິກິດສາ

ຄຳວ່າ ທາງຊ້າຍ ນີ້ເປັນຄຳຮຽກ ມິດສາມັກມີອົງ ໘ ຄື (໑) ມິດສາທິດຖິ ຯລຯ (໘) ມິດສາສະມາທິ

ຄຳວ່າ ທາງຂວາ ນີ້ເປັນຄຳຮຽກອະຣິຍະມັກມີອົງ ໘ ຄື (໑) ສຳມາທິດຖິ ຯລຯ (໘) ສຳມາສະມາທິ

ຄຳວ່າ ປ່າໜາທຶບ ນີ້ເປັນຄຳຮຽກ ອະວິດຊາ

ຄຳວ່າ ບ່ອນຫຼຸບໃຫຍ່ມີຕົມ ນີ້ເປັນຄຳຮຽກ ກາມທັງຫຼາຍ

ຄຳວ່າ ໜອງທີ່ເລິກ ນີ້ເປັນຄຳຮຽກ ຄວາມໂກດແລະຄວາມຄັບແຄ້ນໃຈ

ຄຳວ່າ ພື້ນທີ່ງຮາບໜ້າອອນຊອນ ນີ້ເປັນຄຳຮຽກ ນິບພານ

ຕິດສະ ທ່ານຈົ່ງຍິນດີ ຕິດສະ ທ່ານຈົ່ງຍິນດີຕາມໂອວາດທີ່ເຮົາກ່າວສອນ ຕາມຄວາມອະນຸເຄາະທີ່ເຮົາອະນຸເຄາະ ຕາມຄຳພ່ຳສອນທີ່ເຮົາພ່ຳສອນເທີ້ນ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດພາສິດນີ້ແລ້ວ ທ່ານພຣະຕິດສະມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ຕິດສະສູດທີ ໔ ຈົບ**

## ໕. ຍະມະກະສູດ

### ວ່າດ້ວຍພຣະຍະມະກະ

[໘໕] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພິກຂຸຍະມະກະເກີດທິດຖິຊົ່ວແນວນີ້ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວຍ່ອມຂາດສູນພິນາດຫາຍໄປ ບໍ່ເກີດອີກ

ພິກຂຸຈຳນວນຫຼາຍ ໄດ້ຂ່າວວ່າ ພິກຂຸຍະມະກະເກີດທິດຖິຊົ່ວແນວນີ້ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວຍ່ອມຂາດສູນພິນາດຫາຍໄປ ບໍ່ເກີດອີກ

ຕໍ່ມາ ພິກຂຸເຫຼົ່ານັ້ນເຂົ້າໄປຫາທ່ານພຣະຍະມະກະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະຍະມະກະວ່າ ທ່ານຍະມະກະ ໄດ້ຂ່າວວ່າ ທ່ານເກີດທິດຖິຊົ່ວແນວນີ້ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້

ມີພຣະພາກເຈົ້າ ຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດຫາຍໄປບໍ່ເກີດອີກແມ່ນບໍ?

ທ່ານພຣະຍະມະກະຕອບວ່າ ແມ່ນແລ້ວ ຂ້ານ້ອຍ

ທ່ານຍະມະກະ ທ່ານຢ່າໄດ້ກ່າວແນວນັ້ນ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ຍ້ອນການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ເພິ່ງຕັດໄວ້ແນວນີ້ວ່າ ພິກຂຸຂີນາສົບ ຫຼັງຈາກຕາຍແລ້ວ ຍ່ອມຂາດສູນ ພິນາດຫາຍໄປ ບໍ່ເກີດອີກ

ທ່ານພຣະຍະມະກະ ເມື່ອຖືກພິກຂຸເຫຼົ່ານັ້ນວ່າກ່າວແມ່ນແນວນີ້ຢູ່ ກໍຍັງຍຶດທິດຖິຊົ່ວນັ້ນໄວ້ຢ່າງໝັ້ນຄົງກ່າວວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດຫາຍໄປ ບໍ່ເກີດອີກ

ພິກຂຸເຫຼົ່ານັ້ນ ບໍ່ສາມາດຈະໃຫ້ທ່ານພຣະຍະມະກະຄາຍທິດຖິຊົ່ວນັ້ນໄດ້ ຈຶ່ງພາກັນລຸກຈາກອາສະນະເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ແລ້ວກ່າວວ່າ ຂ້າແດ່ ທ່ານສາຣີບຸດ ພຣະຍະມະກະເກີດທິດຖິຊົ່ວແນວນີ້ ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດຫາຍໄປ ບໍ່ເກີດອີກ ຂໍໂອກາດ ຂໍທ່ານພຣະສາຣີບຸດ ໂຜດອາໄສຄວາມອະນຸເຄາະ ເຂົ້າໄປຫາພິກຂຸຍະມະກະຮອດບ່ອນຢູ່ເທີ້ນ

ທ່ານພຣະສາຣີບຸດ ຮັບນິມົນໂດຍດຸດສະນີພາບ

ເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະຍະມະກະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະຍະມະກະດັ່ງນີ້ວ່າ ທ່ານຍະມະກະ ໄດ້ຂ່າວວ່າ ທ່ານເກີດທິດຖິຊົ່ວແນວນີ້ວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດ ບໍ່ເກີດອີກ ແມ່ນບໍ?

ທ່ານພຣະຍະມະກະຕອບວ່າ ແມ່ນແລ້ວ ຂ້ານ້ອຍ ຂ້ານ້ອຍຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວ ຍ່ອມຂາດສູນ ພິນາດຫາຍໄປບໍ່ເກີດອີກ

ທ່ານຍະມະກະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ฯลฯ

ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຍ້ອນເຫດນັ້ນແລ ຯລຯ ພຣະອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ທ່ານຍະມະກະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ທ່ານພິຈາລະນາເຫັນຮູບວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານພິຈາລະນາເຫັນເວທະນາວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານພິຈາລະນາເຫັນສັນຍາ ຯລຯ ສັງຂານ ຯລຯ ວິນຍານວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານຍະມະກະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນຮູບແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີນອກຈາກຮູບແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນເວທະນາ ບໍ

ບໍ່ແມ່ນ ຂ້ານ້ອຍ

ຯລຯ ໃນເວທະນາ ຯລຯ ນອກຈາກເວທະນາ ຯລຯ ໃນສັນຍາ ຯລຯ ນອກຈາກສັນຍາ ຯລຯ ໃນສັງຂານທັງຫຼາຍ ຯລຯ ນອກຈາກສັງຂານທັງຫຼາຍ ຯລຯ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນວິນຍານແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີນອກຈາກວິນຍານແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານຍະມະກະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ທ່ານພິຈາລະນາເຫັນຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານຍະມະກະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນວ່າ ຕະຖາຄົດນີ້ ບໍ່ມີຮູບ ຯລຯ ບໍ່ມີເວທະນາ ຯລຯ ບໍ່ມີສັນຍາ ຯລຯ ບໍ່ມີສັງຂານ ຯລຯ ບໍ່ມີວິນຍານແມ່ນບໍ?

ບໍ່ແມ່ນ ຂ້ານ້ອຍ

ທ່ານຍະມະກະ ແທ້ຈິງ ທ່ານຈະຄົ້ນຫາຕະຖາຄົດໃນຂັນ ໕ ປະການນີ້ໃນປັດຈຸບັນບໍ່ໄດ້ເລີຍ ຄວນບໍທີ່ທ່ານຈະກ່າວວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ວ່າ ພິກຂຸຂີນາສົບຫຼັງຈາກຕາຍແລ້ວ ຍ່ອມຂາດສູນ ພິນາດຫາຍໄປ ບໍ່ເກີດອີກ

ທ່ານສາຣີບຸດ ແຕ່ກ່ອນຂ້ານ້ອຍບໍ່ຮູ້ຈຶ່ງໄດ້ເກີດທິດຖິຊົ່ວເຊັ່ນນັ້ນ ແຕ່ບັດນີ້ ຍ້ອນຟັງທຳມະເທດສະໜານີ້ຂອງທ່ານສາຣີບຸດ ຂ້ານ້ອຍຈຶ່ງລະທິດຖິຊົ່ວນັ້ນໄດ້ແລ້ວ ແລະ ໄດ້ບັນລຸທຳ

ທ່ານຍະມະກະ ຖ້າຊົນທັງຫຼາຍເພິ່ງຖາມທ່ານແນວນີ້ວ່າ ທ່ານຍະມະກະ ພິກຂຸອະຣະຫັນຕະຂີນາສົບຫຼັງຈາກຕາຍແລ້ວເປັນອັນໃດ? ທ່ານຖືກຖາມແນວນີ້ຈະເພິ່ງຕອບແນວໃດ?

ທ່ານຜູ້ມີອາຍຸ ຖ້າພວກເຂົາຖາມແນວນີ້ວ່າ ພິກຂຸອະຣະຫັນຕະຂີນາສົບຫຼັງຈາກຕາຍແລ້ວເປັນອັນໃດ? ຂ້ານ້ອຍ ເມື່ອຖືກຖາມແນວນີ້ຈະເພິ່ງຕອບແນວນີ້ວ່າ ຮູບບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນດັບໄປແລ້ວ ຕັ້ງຢູ່ບໍ່ໄດ້ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນດັບໄປແລ້ວຕັ້ງຢູ່ບໍ່ໄດ້ ທ່ານຜູ້ມີອາຍຸ ຂ້ານ້ອຍຖືກຖາມແນວນີ້ເພິ່ງຕອບແນວນີ້

ດີແລ້ວ ດີແລ້ວ ທ່ານຍະມະກະ ຖ້າເປັນແນວນັ້ນ ຂ້ານ້ອຍຈະຍົກອຸປະມາໃຫ້ທ່ານຟັງເພື່ອເຂົ້າໃຈເນື້ອຄວາມນັ້ນຊັດເຈນຂຶ້ນ ປຽບຄື ຄະຫະບໍດີຫຼືບຸດຄະຫະບໍດີຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ແລະມີການອາຮັກຂາຢ່າງກວດຂັນ ເກີດມີບຸຣຸດຄົນໜຶ່ງມຸ້ງຄວາມພິນາດ ຄວາມບໍ່ເປັນປະໂຫຍດ ແລະຄວາມບໍ່ປອດໄພ ຍາກຈະຕັດຊີວິດເຂົາ ເຂົາຈຶ່ງມີຄວາມຄິດວ່າ ຄະຫະບໍດີຫຼືບຸດຄະຫະບໍດີຜູ້ນີ້ເປັນຄົນຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ແລະເຂົາມີການອາຮັກຂາຢ່າງກວດຂັນ ການທີ່ຈະອຸກອາດຕັດຊີວິດເຂົາບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນໃຊ້ອຸບາຍຕັດຊີວິດ

ເຂົາເພິ່ງເຂົ້າໄປຫາຄະຫະບໍດີ ຫຼື ບຸດຄະຫະບໍດີນັ້ນກ່າວແນວນີ້ວ່າ ຂ້ານ້ອຍຈະຂໍຮັບໃຊ້ທ່ານ ຄະຫະບໍດີຫຼືບຸດຄະຫະບໍດີເພິ່ງຮັບເຂົາໄວ້ ເຂົາຮັບໃຊ້ຢ່າງດີ ຄື ມີປົກກະຕິຕື່ນກ່ອນ ນອນພາຍຫຼັງ ຖ້າຟັງຄຳສັ່ງ ປະພຶດຕົນໃຫ້ເປັນທີ່ພໍໃຈ ເວົ້າແຕ່ຄຳມ່ວນ ຄະຫະບໍດີຫຼືບຸດຄະຫະບໍດີນັ້ນເຊື່ອວ່າເຂົາເປັນມິດສະຫາຍ ແລະ ໄວ້ໃຈເຂົາ ເມື່ອໃດ ບຸຣຸດນັ້ນ ຄິດວ່າ ຄະຫະບໍດີຫຼືບຸດຄະຫະບໍດີນີ້ໄວ້ໃຈເຮົາແລ້ວ ເມື່ອນັ້ນ ເຂົາຮູ້ວ່າຄະຫະບໍດີຫຼືບຸດຄະຫະບໍດີຢູ່ໃນບ່ອນລັບ ຈຶ່ງໃຊ້ອາວຸດອັນຄົມຕັດຊີວິດທັນທີ

ທ່ານຍະມະກະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ?

ໃນການໃດ ບຸຣຸດນັ້ນເຂົ້າໄປຫາຄະຫະບໍດີຫຼືບຸດຄະຫະບໍດີນັ້ນແລ້ວກ່າວວ່າ ຂ້ານ້ອຍຈະຂໍຮັບໃຊ້ທ່ານ ແມ່ນໃນການນັ້ນ ເຂົາກໍຊື່ວ່າເປັນຜູ້ຂ້ານັ້ນເອງ ແຕ່ຄະຫະບໍດີຫຼືບຸດຄະຫະບໍດີນັ້ນກໍ

ບໍ່ຮູ້ຈັກບຸຣຸດຜູ້ຂ້າວ່າ ເປັນຜູ້ຂ້າຕົນ ແມ່ນໃນການໃດ ບຸຣຸດນັ້ນຮັບໃຊ້ຢ່າງດີ ຄື ມີປົກກະຕິຕື່ນກ່ອນ ນອນພາຍຫຼັງ ຖ້າຟັງຄຳສັ່ງ ປະພຶດຕົນໃຫ້ເປັນທີ່ພໍໃຈ ເວົ້າແຕ່ຄຳມ່ວນ ແມ່ນໃນການນັ້ນ ເຂົາກໍຊື່ວ່າເປັນຜູ້ຂ້ານັ້ນເອງ ແຕ່ຄະຫະບໍດີຫຼືບຸດຄະຫະບໍດີນັ້ນກໍບໍ່ຮູ້ຈັກບຸຣຸດຜູ້ຂ້າວ່າ ເປັນຜູ້ຂ້າຕົນ ແມ່ນໃນການໃດ ບຸຣຸດນັ້ນຮູ້ວ່າ ຄະຫະບໍດີຫຼືບຸດຄະຫະບໍດີຢູ່ໃນບ່ອນລັບ ຈຶ່ງໃຊ້ອາວຸດອັນຄົມຕັດຊີວິດ ແມ່ນໃນການນັ້ນ ເຂົາກໍຊື່ວ່າເປັນຜູ້ຂ້ານັ້ນເອງ ແຕ່ຄະຫະບໍດີຫຼືບຸດຄະຫະບໍດີນັ້ນກໍບໍ່ຮູ້ຈັກບຸຣຸດຜູ້ຂ້າວ່າ ເປັນຜູ້ຂ້າຕົນແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ທ່ານຍະມະກະ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ປຸຖຸຊົນຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ฯລฯ ຫຼື ພິຈາລະນາເຫັນອັດຕາໃນວິນຍານ

ເຂົາບໍ່ຮູ້ແຈ້ງຮູບທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ຮູບບໍ່ທ່ຽງ ບໍ່ຮູ້ແຈ້ງເວທະນາທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ເວທະນາບໍ່ທ່ຽງ ບໍ່ຮູ້ແຈ້ງສັນຍາທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ສັນຍາບໍ່ທ່ຽງ ບໍ່ຮູ້ແຈ້ງສັງຂານທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ສັງຂານບໍ່ທ່ຽງ ບໍ່ຮູ້ແຈ້ງວິນຍານທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ວິນຍານບໍ່ທ່ຽງ

ບໍ່ຮູ້ແຈ້ງຮູບທີ່ເປັນທຸກຕາມຄວາມເປັນຈິງວ່າ ຮູບເປັນທຸກ ฯລฯ ເວທະນາທີ່ເປັນທຸກ ฯລฯ ສັນຍາທີ່ເປັນທຸກ ฯລฯ ສັງຂານທີ່ເປັນທຸກ ฯລฯ ບໍ່ຮູ້ແຈ້ງວິນຍານທີ່ເປັນທຸກຕາມຄວາມເປັນຈິງວ່າ ວິນຍານເປັນທຸກ

ບໍ່ຮູ້ແຈ້ງຮູບທີ່ເປັນອະນັດຕາຕາມຄວາມເປັນຈິງວ່າ ຮູບເປັນອະນັດຕາ ฯລฯ ເວທະນາທີ່ເປັນອະນັດຕາ ฯລฯ ສັນຍາທີ່ເປັນອະນັດຕາ ฯລฯ ສັງຂານທີ່ເປັນອະນັດຕາ ฯລฯ ບໍ່ຮູ້ແຈ້ງວິນຍານທີ່ເປັນອະນັດຕາຕາມຄວາມເປັນຈິງວ່າ ວິນຍານເປັນອະນັດຕາ

ບໍ່ຮູ້ແຈ້ງຮູບທີ່ຖືກປັດໄຈປຸງແຕ່ງຕາມຄວາມເປັນຈິງວ່າ ຮູບຖືກປັດໄຈປຸງແຕ່ງ ฯລฯ ເວທະນາທີ່ຖືກປັດໄຈປຸງແຕ່ງ ฯລฯ ສັນຍາທີ່ຖືກປັດໄຈປຸງແຕ່ງ ฯລฯ ສັງຂານທີ່ຖືກປັດໄຈປຸງແຕ່ງ ฯລฯ ບໍ່ຮູ້ແຈ້ງວິນຍານທີ່ຖືກປັດໄຈປຸງແຕ່ງຕາມຄວາມເປັນຈິງວ່າ ວິນຍານຖືກປັດໄຈປຸງແຕ່ງ

ບໍ່ຮູ້ແຈ້ງຮູບທີ່ເປັນຜູ້ຂ້າຕາມຄວາມເປັນຈິງວ່າ ຮູບເປັນຜູ້ຂ້າ ຯລຯ ເວທະນາທີ່ເປັນຜູ້ຂ້າ ຯລຯ ສັນຍາທີ່ເປັນຜູ້ຂ້າ ຯລຯ ສັງຂານທີ່ເປັນຜູ້ຂ້າ ຯລຯ ບໍ່ຮູ້ແຈ້ງວິນຍານທີ່ເປັນຜູ້ຂ້າຕາມຄວາມເປັນຈິງວ່າ ວິນຍານເປັນຜູ້ຂ້າເຂົາເຂົ້າໄປຍຶດໝັ້ນຮູບວ່າ ເປັນອັດຕາຂອງເຮົາ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ເຂົ້າໄປຍຶດໝັ້ນວິນຍານວ່າ ເປັນອັດຕາຂອງເຮົາ ອຸປາທານຂັນ ໕ ປະການນີ້ທີ່ປຸຖຸຊົນນັ້ນເຂົ້າໄປຍຶດໝັ້ນ ຍ່ອມເປັນໄປເພື່ອບໍ່ເປັນປະໂຫຍດເກື້ອກູນ ເພື່ອຄວາມທຸກຕະຫຼອດການລະນານ

ທ່ານຜູ້ມີອາຍຸ ສ່ວນພຣະອະຣິຍະສາວົກຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ຯລຯ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ ບໍ່ພິຈາລະນາເຫັນເວທະນາ ຯລຯ ບໍ່ພິຈາລະນາເຫັນສັນຍາ ຯລຯ ບໍ່ພິຈາລະນາເຫັນສັງຂານ ຯລຯ

ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ

ເຂົາຮູ້ແຈ້ງຮູບທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ຮູບບໍ່ທ່ຽງ ຮູ້ແຈ້ງເວທະນາທີ່ບໍ່ທ່ຽງ ຯລຯ ສັນຍາທີ່ບໍ່ທ່ຽງ ຯລຯ ສັງຂານທີ່ບໍ່ທ່ຽງ ຯລຯ ຮູ້ແຈ້ງວິນຍານທີ່ບໍ່ທ່ຽງຕາມຄວາມເປັນຈິງວ່າ ວິນຍານບໍ່ທ່ຽງ

ຮູ້ແຈ້ງຮູບທີ່ເປັນທຸກຕາມຄວາມເປັນຈິງວ່າ ຮູບເປັນທຸກ ຮູ້ແຈ້ງເວທະນາທີ່ເປັນທຸກ ຯລຯ ສັນຍາທີ່ເປັນທຸກ ຯລຯ ສັງຂານທີ່ເປັນທຸກ ຯລຯ ຮູ້ແຈ້ງວິນຍານທີ່ເປັນທຸກຕາມຄວາມເປັນຈິງວ່າ ວິນຍານເປັນທຸກ

ຮູ້ແຈ້ງຮູບທີ່ເປັນອະນັດຕາຕາມຄວາມເປັນຈິງວ່າ ຮູບເປັນອະນັດຕາ ຮູ້ແຈ້ງເວທະນາທີ່ເປັນອະນັດຕາ ຯລຯ ສັນຍາທີ່ເປັນອະນັດຕາ ຯລຯ ສັງຂານທີ່ເປັນອະນັດຕາ ຯລຯ ຮູ້ແຈ້ງວິນຍານທີ່ເປັນອະນັດຕາຕາມຄວາມເປັນຈິງວ່າ ວິນຍານເປັນອະນັດຕາ

ຮູ້ແຈ້ງຮູບທີ່ຖືກປັດໄຈປຸງແຕ່ງຕາມຄວາມເປັນຈິງວ່າ ຮູບຖືກປັດໄຈປຸງແຕ່ງ ຮູ້ແຈ້ງເວທະນາທີ່ຖືກປັດໄຈປຸງແຕ່ງ ຯລຯ ສັນຍາທີ່ຖືກປັດໄຈປຸງແຕ່ງ ຯລຯ ສັງຂານທີ່ຖືກປັດໄຈປຸງແຕ່ງ ຯລຯ ຮູ້ແຈ້ງວິນຍານທີ່ຖືກປັດໄຈປຸງແຕ່ງຕາມຄວາມເປັນຈິງວ່າ ວິນຍານຖືກປັດໄຈປຸງແຕ່ງຮູ້ແຈ້ງຮູບທີ່ເປັນຜູ້ຂ້າຕາມຄວາມເປັນຈິງວ່າ ຮູບເປັນຜູ້ຂ້າ ຮູ້ແຈ້ງເວທະນາທີ່ເປັນຜູ້ຂ້າ ຯລຯ ສັນຍາທີ່ເປັນຜູ້ຂ້າ ຯລຯ ຮູ້ແຈ້ງສັງຂານທີ່ເປັນຜູ້ຂ້າຕາມຄວາມເປັນຈິງວ່າ ສັງຂານເປັນຜູ້ຂ້າ ຮູ້ແຈ້ງວິນຍານທີ່ເປັນຜູ້ຂ້າຕາມຄວາມເປັນຈິງວ່າ ວິນຍານເປັນຜູ້ຂ້າເຂົາບໍ່ເຂົ້າໄປຍຶດໝັ້ນຮູບ

ວ່າ ຮູບເປັນອັດຕາຂອງເຮົາ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ເຂົ້າໄປຍຶດໝັ້ນວິນຍານວ່າ ວິນຍານເປັນອັດຕາຂອງເຮົາ ອຸປາທານຂັນ ໕ ປະການນີ້ທີ່ພຣະອະຣິຍະສາວົກນັ້ນບໍ່ເຂົ້າໄປຍຶດໝັ້ນ ຍ່ອມເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານ

ຂ້າແດ່ ທ່ານສາຣີບຸດ ຂໍ້ທີ່ເພື່ອນພົມມະຈາຣີທັງຫຼາຍ ຜູ້ເປັນຄືກັນກັບທ່ານເປັນຜູ້ອະນຸເຄາະ ມຸ້ງປະໂຫຍດ ວ່າກ່າວ ພ່ຳສອນ ຍ່ອມເປັນແນວນັ້ນ ແລະຍ້ອນໄດ້ຟັງທຳມະເທດສະໜານີ້ຂອງທ່ານສາຣີບຸດ ຈິດຂອງຂ້ານ້ອຍຈຶ່ງລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ

**ຍະມະກະສູດທີ ໓ ຈົບ**

# ໔. ອະນຸຣາທະສູດ

## ວ່າດ້ວຍພຣະອະນຸຣາທະ

[໘໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ສະໄໝນັ້ນ ທ່ານພຣະອະນຸຣາທະຢູ່ທີ່ກຸຕິປ່າ ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ອັນຍະເດຍຣະຖີປະຣິພາຊົກ ຈຳນວນຫຼາຍເຂົ້າໄປຫາທ່ານພຣະອະນຸຣາທະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອະນຸຣາທະດັ່ງນີ້ວ່າ ທ່ານອະນຸຣາທະ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊົງບັນລຸທຳທີ່ຄວນບັນລຸຢ່າງປະເສີດ ເມື່ອຈະຊົງບັນຍັດຂໍ້ນັ້ນ ຍ່ອມຊົງບັນຍັດໃນຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ
໒. ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ
໓. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ
໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ

ເມື່ອອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຖາມແນວນີ້ແລ້ວ ທ່ານພຣະອະນຸຣາທະໄດ້ຕອບວ່າ ຜູ້ມີອາຍຸທັງຫຼາຍ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊົງບັນລຸທຳທີ່ຄວນບັນລຸຢ່າງປະເສີດ ເມື່ອຈະຊົງບັນຍັດຂໍ້ນັ້ນ ຍ່ອມຊົງບັນຍັດເວັ້ນຈາກຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ

໒. ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ

໓. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ

໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເມື່ອທ່ານພຣະອະນຸຣາທະຕອບແນວນີ້ແລ້ວ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນໄດ້ກ່າວກັບທ່ານພຣະອະນຸຣາທະດັ່ງນີ້ວ່າ ທ່ານທັງຫຼາຍ ພິກຂຸອົງນີ້ຄົງຈັກເປັນພຣະໃໝ່ບວດໄດ້ບໍ່ດົນ ຫຼື ເປັນພຣະເຖຣະແຕ່ໂງ່ ບໍ່ສະຫຼາດ ບັດນັ້ນ ພວກອັນຍະເດຍຣະຖີປະຣິພາຊົກກ່າວຮຸກຮານທ່ານພຣະອະນຸຣາທະດ້ວຍວາທະວ່າ ເປັນພຣະໃໝ່ ແລະ ວາທະວ່າເປັນພຣະໂງ່ ພາກັນລຸກຈາກອາສະນະແລ້ວຈາກໄປ

ຄັນເມື່ອພວກອັນຍະເດຍຣະຖີປະຣິພາຊົກຈາກໄປບໍ່ດົນ ທ່ານພຣະອະນຸຣາທະໄດ້ມີຄວາມຄິດວ່າ ຖ້າອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເພິ່ງຖາມບັນຫາກັບເຮົາຍິ່ງຂຶ້ນໄປ ເຮົາຈະພະຍາກອນແກ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວໃດ ຈຶ່ງຈະຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີຄຳກ່າວເຊັ່ນນັ້ນແລະການຄ້ອຍຕາມທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

## ພຣະອະນຸຣາທະທູນຖາມບັນຫາພຣະຜູ້ມີພຣະພາກເຈົ້າ

ຕໍ່ມາ ທ່ານພຣະອະນຸຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້າພຣະອົງຢູ່ທີ່ກຸດຕິປ່າ ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນ ອັນຍະເດຍຣະຖີປະຣິພາຊົກຈຳນວນຫຼາຍເຂົ້າໄປຫາຂ້າພຣະອົງຮອດບ່ອນຢູ່ ຯລຯ ໄດ້ຖາມ

ຂ້າພຣະອົງດັ່ງນີ້ວ່າ ທ່ານອະນຸຣາທະ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊົງບັນລຸທຳທີ່ຄວນບັນລຸຢ່າງປະເສີດ ເມື່ອຈະຊົງບັນຍັດຂໍ້ນັ້ນ ຍ່ອມຊົງບັນຍັດໃນຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ

໒. ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ

໓. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ

໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ

ເມື່ອພວກອັນຍະເດຍຣະຖີປະຣິພາຊົກຖາມແນວນີ້ແລ້ວ ຂ້າພຣະອົງໄດ້ຕອບດັ່ງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊົງບັນລຸທຳທີ່ຄວນ

ບັນລຸຢ່າງປະເສີດ ເມື່ອຈະຊີ້ງບັນຍັດຂໍ້ນັ້ນ ຍ່ອມຊີ້ງບັນຍັດເວັ້ນຈາກຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ

ຯລຯ

໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເມື່ອຂ້າພຣະອົງຕອບແນວນີ້ແລ້ວ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ ພິກຂຸອົງນີ້ ຄົງຈັກເປັນພຣະໃໝ່ບວດໄດ້ບໍ່ດົນ ຫຼື ເປັນພຣະເຖຣະແຕ່ໂງ່ບໍ່ສະຫຼາດ ເວລານັ້ນ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ກ່າວຮຸກຮານຂ້າພຣະອົງດ້ວຍວາທະວ່າເປັນພຣະໃໝ່ແລະດ້ວຍວາທະວ່າເປັນພຣະໂງ່ ພາກັນລຸກຈາກອາສະນະແລ້ວຈາກໄປ

ເມື່ອອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຈາກໄປບໍ່ດົນ ຂ້າພຣະອົງໄດ້ມີຄວາມຄິດວ່າ ຖ້າພວກອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເພິ່ງຖາມບັນຫາກັບເຮົາຍິ່ງຂຶ້ນໄປ ເຮົາຈະພະຍາກອນແກ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວໃດ ຈຶ່ງຈະຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີຄຳກ່າວເຊັ່ນນັ້ນແລະການຄ້ອຍຕາມທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ອະນຸຣາທະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ທ່ານພຣະອະນຸຣາທະຂາບທູນວ່າ ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ??
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຍ້ອນເຫດນັ້ນແລ ຯລຯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອະນຸຣາທະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນຮູບວ່າ ເປັນຕະຖາຄົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານວ່າ ເປັນຕະຖາຄົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນຮູບແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີນອກຈາກຮູບແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນເວທະນາ ຯລຯ ນອກຈາກເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ນອກຈາກສັງຂານ ຯລຯ ໃນວິນຍານແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີນອກຈາກວິນຍານແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນວ່າ ຕະຖາຄົດນີ້ບໍ່ມີຮູບ ຯລຯ ບໍ່ມີເວທະນາ ຯລຯ ບໍ່ມີສັນຍາ ຯລຯ ບໍ່ມີສັງຂານ ພິຈາລະນາເຫັນວ່າ ຕະຖາຄົດບໍ່ມີວິນຍານແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ແທ້ທີ່ຈິງ ທ່ານຈະຄົ້ນຫາຕະຖາຄົດໂດຍຈິງໂດຍແທ້ໃນຂັນ ໕ ປະການນີ້ໃນປັດຈຸບັນບໍ່ໄດ້ເລີຍ ຄວນບໍທີ່ທ່ານຈະຕອບວ່າ ຜູ້ມີອາຍຸທັງຫຼາຍ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊຶ່ງບັນລຸທຳທີ່ຄວນບັນລຸແນວປະເສີດ ເມື່ອຈະຊົງບັນຍັດຂໍ້ນັ້ນ ຍ່ອມຊົງບັນຍັດເວັ້ນຈາກຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ

໔. ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ

໖. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ

໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ດີແລ້ວ ດີແລ້ວ ອະນຸຣາທະ ທັງໃນການກ່ອນແລະໃນບັດນີ້ ເຮົາຍ່ອມບັນຍັດທຸກແລະຄວາມດັບທຸກທໍ່ນັ້ນ

**ອະນຸຣາທະສູດທີ ໔ ຈົບ**

# ໕. ວັກກະລິສູດ

## ວ່າດ້ວຍພຣະວັກກະລິ

[໘໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະວັກກະລິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ພັກຢູ່ທີ່ໂຮງຊ່າງໝໍ້

ຄັ້ງນັ້ນ ທ່ານພຣະວັກກະລິຮຽກພິກຂຸຜູ້ອຸປັດຖາກທັງຫຼາຍມາກ່າວວ່າ ມາເທີ້ນ ທ່ານຜູ້ມີອາຍຸທັງຫຼາຍ ພວກທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະບາດທັງສອງດ້ວຍຂະໜ່ອມຕາມຄຳຂອງຂ້ານ້ອຍວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸວັກກະລິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະອົງດ້ວຍຂະໜ່ອມ ແລະ ຂໍພວກທ່ານຈົ່ງຂາບທູນແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດອາໄສຄວາມອະນຸເຄາະສະເດັດໄປຢັ້ງມພິກຂຸວັກກະລິຮອດບ່ອນຢູ່ເທີ້ນ

ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸວັກກະລິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະອົງດ້ວຍຂະໜ່ອມ ແລະ ຝາກມາຂາບທູນແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດອາໄສຄວາມອະນຸເຄາະສະເດັດໄປຢັ້ງມພິກຂຸວັກກະລິຮອດບ່ອນຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ໄດ້ສະເດັດເຂົ້າໄປຢ້ຽມທ່ານພຣະວັກກະລິຮອດບ່ອນຢູ່ ທ່ານພຣະວັກກະລິໄດ້ເຫັນພຣະຜູ້ມີພຣະພາກເຈົ້າກໍາລັງສະເດັດມາແຕ່ໄກຈຶ່ງລຸກຂຶ້ນຈາກຕຽງ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະວັກກະລິດັ່ງນີ້ວ່າ ຢ່າເລີຍ ວັກກະລິ ທ່ານຢ່າລຸກຈາກຕຽງເລີຍ ເຮົາຈັກນັ່ງເທິງອາສະນະທີ່ປູລາດໄວ້ນັ້ນ

ພຣະຜູ້ມີພຣະພາກເຈົ້າ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມວ່າ ວັກກະລິ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງ ບໍ່ກໍາເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກໍາເຣີບບໍ່ປາກົດບໍ?

ທ່ານພຣະວັກກະລິຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກໍາເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກໍາເຣີບຜາກົດ ອາການທຸເລົາບໍ່ຜາກົດ ຂ້ານ້ອຍ

ວັກກະລິ ທ່ານບໍ່ລໍາຄານ ບໍ່ທຸຣົນທຸຣາຍແດ່ບໍ?

ຄວາມຈິງ ຂ້າພຣະອົງລໍາຄານ ທຸຣົນທຸຣາຍຫຼາຍຢູ່ ຂ້ານ້ອຍ

ວັກກະລິ ທ່ານຕິຕຽນຕົນເອງໂດຍສີນໄດ້ບໍ?

ຂ້າພຣະອົງ ຕິຕຽນຕົນເອງໂດຍສີນບໍ່ໄດ້ເລີຍ ຂ້ານ້ອຍ

ວັກກະລິ ຖ້າທ່ານຕິຕຽນຕົນເອງໂດຍສີນບໍ່ໄດ້ແລ້ວ ເມື່ອເປັນເຊັ່ນນັ້ນ ທ່ານຈະລໍາຄານທຸຣົນທຸຣາຍໄປເຮັດຫຍັງ?

ຂ້າພຣະອົງ ປະສົງຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າດົນແລ້ວ ແຕ່ຮ່າງກາຍຂອງຂ້າພຣະອົງບໍ່ມີກໍາລັງພໍທີ່ຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ ຂ້ານ້ອຍ

ຢ່າເລີຍ ວັກກະລິ ຈະມີປະໂຫຍດອັນໃດດ້ວຍຮ່າງກາຍອັນເປື່ອຍເນົ່າທີ່ທ່ານເຫັນຢູ່ນີ້ ຜູ້ໃດເຫັນທໍາ ຜູ້ນັ້ນຊື່ວ່າ ເຫັນເຮົາ ຜູ້ໃດເຫັນເຮົາ ຜູ້ນັ້ນຊື່ວ່າເຫັນທໍາ ຄວາມຈິງ ເມື່ອເຫັນທໍາກໍຊື່ວ່າເຫັນເຮົາ ເມື່ອເຫັນເຮົາກໍຊື່ວ່າເຫັນທໍາ

ວັກກະລິ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ຯລຯ. ສັນຍາ ຯລຯ. ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຯລຯ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ຍ້ອນເຫດນັ້ນແລ ຯລຯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດສອນທ່ານພຣະວັກກະລິ ດ້ວຍພຣະໂອວາດນີ້ແລ້ວຊົງລຸກຈາກພຸດທະອາດສະເດັດໄປທາງພູຄິດຊະກູດ

ລຳດັບນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ທ່ານພຣະວັກກະລິໄດ້ຮຽກພິກຂຸຜູ້ອຸປັດຖາກທັງຫຼາຍມາກ່າວວ່າ ມາເທີ້ນ ທ່ານຜູ້ມີອາຍຸທັງຫຼາຍ ຈົ່ງຊ່ອຍອຸ້ມຂ້ານ້ອຍຂຶ້ນຕຽງແລ້ວຫາມໄປສູ່ວິຫານກາສິລາຂ້າງພູອິສິຄິລິ ເປັນຫຍັງ? ພຣະຄືຂ້ານ້ອຍຈະເພິ່ງສຳຄັນຕົນວ່າຄວນມໍຣະນະພາບໃນບໍລິເວນບ້ານບໍ?

ພິກຂຸຜູ້ອຸປັດຖາກເຫຼົ່ານັ້ນ ຮັບຄຳແລ້ວອຸ້ມທ່ານພຣະວັກກະລິຂຶ້ນຕຽງ ຫາມໄປສູ່ວິຫານກາສິລາຂ້າງພູອິສິຄິລິ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ທີ່ພູຄິດຊະກູດຕະຫຼອດຄືນແລະວັນທີຍັງເຫຼືອຢູ່ນັ້ນ ເມື່ອຣາຕີຜ່ານໄປ ເທວະດາ ໒ ອົງ ມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພູຄິດຊະກູດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ຢືນຢູ່ບ່ອນທີ່ສົມຄວນແລ້ວເທວະດາອົງໜຶ່ງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະວັກກະລິຄິດເພື່ອລຸດພົ້ນ

ເທວະດາອີກອົງໜຶ່ງໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະວັກກະລິນັ້ນລຸດພົ້ນດີແລ້ວ ຈັກລຸດພົ້ນໄດ້ແນ່ນອນ

ເທວະດາເຫຼົ່ານັ້ນ ໄດ້ຂາບທູນດັ່ງນີ້ແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ທຳປະທັກຂິນແລ້ວ ຫາຍໂຕໄປໃນບ່ອນນັ້ນ ໆ ເອງ

ເມື່ອຣາຕີນັ້ນ ຜ່ານໄປ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ມາເທີ້ນພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເຂົ້າໄປຫາພິກຂຸວັກກະລິຮອດບ່ອນຢູ່ແລ້ວບອກວ່າ ທ່ານວັກກະລິ ທ່ານຈົ່ງຟັງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ແລະ ຄຳຂອງເທວະດາ ໒ ອົງ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາ ໒ ອົງ ມີວັນນະງົດງາມຫຼາຍ ເປ່ງຣັດສະໝີໃຫ້ສະຫວ່າງທົ່ວພູຄິດຊະກູດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ຢືນຢູ່ບ່ອນທີ່ສົມຄວນແລ້ວເທວະດາອົງໜຶ່ງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະວັກກະລິຄິດເພື່ອລຸດພົ້ນ ເທວະດາອີກອົງໜຶ່ງໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະວັກກະລິນັ້ນລຸດພົ້ນດີແລ້ວ ຈັກລຸດພົ້ນໄດ້ແນ່ ທັງພຣະຜູ້ມີພຣະພາກເຈົ້າໄດ້ຕັດເຖິງທ່ານວ່າ ຢ່າຢ້ານເລີຍວັກກະລິ ຢ່າຢ້ານເລີຍວັກກະລິ ຄວາມຕາຍອັນບໍ່ຕ່ຳຊ້າຈັກມີແກ່ທ່ານ ການທຳກາລະ (ຕາຍ) ຈະບໍ່ຊົ່ວຊາມ

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ເຂົ້າໄປຫາທ່ານພຣະວັກກະລິຮອດບ່ອນຢູ່ແລ້ວໄດ້ບອກວ່າ ທ່ານວັກກະລິ ທ່ານຈົ່ງຟັງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ແລະຄຳຂອງເທວະດາ ໒ ອົງເທີ້ນ

ລຳດັບນັ້ນ ທ່ານພຣະວັກກະລິໄດ້ຮຽກພິກຂຸຜູ້ອຸປັດຖາກທັງຫຼາຍມາກ່າວວ່າ ມາເທີ້ນທ່ານຜູ້ມີອາຍຸທັງຫຼາຍ ຈົ່ງຊ່ວຍອຸ້ມຂ້ານ້ອຍລົງຈາກຕຽງ ເປັນຫຍັງ ພຣະຄືຂ້ານ້ອຍຈະເພິ່ງສຳຄັນຕົນວ່າ ຄວນນັ່ງເທິງອາສະນະສູງແລ້ວຟັງຄຳສັ່ງສອນຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນນໍ

ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວກໍຊ່ວຍກັນອຸ້ມທ່ານພຣະວັກກະລິລົງຈາກຕຽງ ພິກຂຸທັງຫຼາຍກ່າວວ່າ ທ່ານຜູ້ມີອາຍຸ ເມື່ອຄືນນີ້ ເມື່ອຣາຕີຜ່ານໄປ ເທວະດາ ໒ ອົງ ໆລໆ ຢືນຢູ່ບ່ອນທີ່ສົມຄວນ ແລ້ວເທວະດາອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະວັກກະລິຄິດເພື່ອລຸດພົ້ນ ເທວະດາອີກອົງໜຶ່ງໄດ້ຂາບທູນ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະວັກກະລິນັ້ນລຸດພົ້ນດີແລ້ວ ຈັກລຸດພົ້ນໄດ້ແນ່ ທັງພຣະຜູ້ມີພຣະພາກເຈົ້າໄດ້ຕັດເຖິງທ່ານວ່າ ຢ່າຢ້ານເລີຍວັກກະລິ ຢ່າຢ້ານເລີຍວັກກະລິ ຄວາມຕາຍອັນບໍ່ຕ່ຳຊ້າຈັກມີແກ່ທ່ານ ການທຳກາລະຈະບໍ່ຊົ່ວຊາມ

ທ່ານພຣະວັກກະລິກ່າວວ່າ ທ່ານຜູ້ມີອາຍຸທັງຫຼາຍ ຖ້າເຊັ່ນນັ້ນ ພວກທ່ານຈົ່ງຖວາຍອະພິວາດພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້ າດ້ວຍຂະໜ່ອມຕາມຄຳຂອງຂ້ານ້ອຍວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸວັກກະລິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະອົງດ້ວຍຂະໜ່ອມ ແລະ ຂໍພວກທ່ານຈົ່ງຂາບທູນແນວນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ເຄືອບແຄງຮູບທີ່ບໍ່ທ່ຽງ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ສິ່ງນັ້ນ

ເປັນທຸກ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກແພງໃນສິ່ງນັ້ນບໍ່ມີແກ່ເຮົາ

ບໍ່ເຄືອບແຄງເວທະນາທີ່ບໍ່ທ່ຽງ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກແພງໃນສິ່ງນັ້ນບໍ່ມີແກ່ເຮົາ

ບໍ່ເຄືອບແຄງສັນຍາທີ່ບໍ່ທ່ຽງ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກແພງໃນສິ່ງນັ້ນ ບໍ່ມີແກ່ເຮົາ

ບໍ່ເຄືອບແຄງສັງຂານທີ່ບໍ່ທ່ຽງ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກແພງໃນສິ່ງນັ້ນ ບໍ່ມີແກ່ເຮົາ

ບໍ່ເຄືອບແຄງວິນຍານທີ່ບໍ່ທ່ຽງ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກແພງໃນສິ່ງນັ້ນ ບໍ່ມີແກ່ເຮົາ

ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວກໍຈາກໄປ ເມື່ອພິກຂຸເຫຼົ່ານັ້ນຈາກໄປບໍ່ດົນ ທ່ານພຣະວັກກະລິກໍໄດ້ນຳອາວຸດມາ

ຕໍ່ມາ ພິກຂຸເຫຼົ່ານັ້ນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ນັ່ງຢູ່ບ່ອນທີ່ສົມຄວນ ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸວັກກະລິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະອົງດ້ວຍຂະໜ່ອມ ແລະ ຝາກມາຂາບທູນແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ເຄືອບແຄງຮູບທີ່ບໍ່ທ່ຽງ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກແພງໃນສິ່ງນັ້ນບໍ່ມີແກ່ເຮົາ ບໍ່ເຄືອບແຄງເວທະນາທີ່ບໍ່ທ່ຽງ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ເຄືອບແຄງ ວິນຍານທີ່ບໍ່ທ່ຽງ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ບໍ່ສົງໄສວ່າ ສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວາມພໍໃຈ ຄວາມກຳໜັດ ຫຼື ຄວາມຮັກແພງໃນສິ່ງນັ້ນ ບໍ່ມີແກ່ເຮົາ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ມາເທີ້ນ ພິກຂຸທັງຫຼາຍ ເຮົາຈະໄປສູ່ວິຫານກາສິລາຂ້າງພູອິສິຄິລິ ເຊິ່ງເປັນສະຖານທີ່ທີ່ວັກກະລິກຸນລະບຸດໄດ້ນຳອາວຸດມາ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າ ສະເດັດໄປສູ່ວິຫານກາສິລາຂ້າງພູອິສິຄິລິ ພ້ອມດ້ວຍພິກຂຸຈຳນວນຫຼາຍ ໄດ້ທອດພຣະເນດເຫັນທ່ານພຣະວັກກະລິນອນຄໍບິດຢູ່ເທິງຕຽງແຕ່ໄກ

ສະໄໝນັ້ນ ຜາກົດກຸ່ມຄວັນກຸ່ມໝອກລອຍໄປທາງທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ທິດເບື້ອງເທິງ ທິດເບື້ອງລ່າງແລະທິດສຽງ ລຳດັບນັ້ນເອງ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ແນມເຫັນກຸ່ມຄວັນກຸ່ມໝອກລອຍໄປທາງທິດຕາເວັນອອກ ຯລຯ ແລະ ທິດສຽງບໍ?

ພິກຂຸເຫຼົ່ານັ້ນ ຂາບທູນວ່າ ເຫັນ ຂ້ານ້ອຍ

ພິກຂຸທັງຫຼາຍ ນັ້ນຄືມານຜູ້ມີບາບ ຄົ້ນຫາວິນຍານຂອງວັກກະລິກຸນລະບຸດດ້ວຍຄິດວ່າວິນຍານຂອງວັກກະລິກຸນລະບຸດສະຖິດຢູ່ທີ່ໃດ ພິກຂຸທັງຫຼາຍ ວັກກະລິກຸນລະບຸດບໍ່ມີວິນຍານສະຖິດຢູ່ ປະຣິນິບພານແລ້ວ

**ວັກກະລິສູດທີ ໕ ຈົບ**

# ໖. ອັດສະຊິສູດ

## ວ່າດ້ວຍພຣະອັດສະຊິ

[໘໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະອັດສະຊິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກພັກຢູ່ທີ່ກັດສະປະກາຣາມ

ຄັ້ງນັ້ນ ທ່ານພຣະອັດສະຊິຮຽກພິກຂຸຜູ້ອຸປັດຖາກທັງຫຼາຍມາກ່າວວ່າ ມາເທີ້ນ ທ່ານຜູ້ມີອາຍຸທັງຫຼາຍ ພວກທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດພຣະບາດທັງສອງດ້ວຍຂະໜ່ອມຕາມຄຳຂອງຂ້ານ້ອຍວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸອັດສະຊິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະອົງດ້ວຍຂະໜ່ອມ ແລະ ຂໍພວກທ່ານຈົ່ງຂາບທູນແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າ ໂຜດອາໄສຄວາມອະນຸເຄາະສະເດັດໄປຢ້ຽມພິກຂຸອັດສະຊິຮອດບ່ອນຢູ່ເທີ້ນ

ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້

ຈະເລີນ ພິກຂຸອັດສະຊິອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຖວາຍອະພິວາດພຣະບາດທັງສອງຂອງພຣະອົງດ້ວຍຂະໜ່ອມ ແລະ ຝາກມາຂາບທູນແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດອາໄສຄວາມອະນຸເຄາະສະເດັດໄປຢ້ຽມພິກຂຸອັດສະຊິຮອດບ່ອນຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບ

ເມື່ອໃນເວລາຄໍ່າ ພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຢ້ຽມທ່ານພຣະອັດສະຊິຮອດບ່ອນຢູ່ ທ່ານພຣະອັດສະຊິໄດ້ເຫັນພຣະຜູ້ມີພຣະພາກເຈົ້າກໍາລັງສະເດັດມາແຕ່ໄກຈຶ່ງລຸກຂຶ້ນຈາກຕຽງ

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະອັດສະຊິດັ່ງນີ້ວ່າ ຢ່າເລີຍ ອັດສະຊິ ທ່ານຢ່າລຸກຈາກຕຽງເລີຍ ເຮົາຈັກນັ່ງເທິງອາສະນະທີ່ປູລາດໄວ້ນັ້ນ

ພຣະຜູ້ມີພຣະພາກເຈົ້າ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມວ່າ ອັດສະຊິ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ຯລຯ ອາການທຸເລົາຜາກົດ ອາການກໍາເຣີບບໍ່ຜາກົດບໍ?

ທ່ານພຣະອັດສະຊິຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກໍາເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກໍາເຣີບຜາກົດ ອາການທຸເລົາບໍ່ຜາກົດ ຂ້ານ້ອຍ

ອັດສະຊິ ທ່ານບໍ່ລໍາຄານ ບໍ່ທຸຣົນທຸຣາຍແດ່ບໍ?

ຄວາມຈິງ ຂ້າພຣະອົງລໍາຄານ ທຸຣົນທຸຣາຍຫຼາຍ ຂ້ານ້ອຍ

ອັດສະຊິ ທ່ານຕິຕຽນຕົນເອງໂດຍສີນໄດ້ບໍ?

ຂ້າພຣະອົງ ຕິຕຽນຕົນເອງໂດຍສີນບໍ່ໄດ້ເລີຍ ຂ້ານ້ອຍ

ອັດສະຊິ ຖ້າທ່ານຕິຕຽນຕົນເອງໂດຍສີນບໍ່ໄດ້ແລ້ວ ເມື່ອເປັນເຊັ່ນນັ້ນ ທ່ານຈະລໍາຄານທຸຣົນທຸຣາຍໄປເຮັດຫຍັງ?

ແຕ່ກ່ອນ ຂ້າພຣະອົງລະງັບກາຍສັງຂານ (ລົມຫັນໃຈເຂົ້າອອກ) ບັນເທົາຄວາມປ່ວຍໄຂ້ຢູ່ຈຶ່ງບໍ່ໄດ້ສະມາທິ ເມື່ອຂ້າພຣະອົງບໍ່ໄດ້ສະມາທິຈຶ່ງຄິດແນວນີ້ວ່າ ເຮົາຍັງບໍ່ເສື່ອມຈາກສະມາທິນັ້ນບໍ? ຂ້ານ້ອຍ

ອັດສະຊິ ສະມະນະພາມທັງຫຼາຍທີ່ມີສະມາທິເປັນແກ່ນສານ ມີສະມາທິເປັນຄຸນແຫ່ງສະມະນະ ເມື່ອບໍ່ໄດ້ສະມາທິນັ້ນຈຶ່ງຄິດວ່າ ເຮົາຍັງບໍ່ເສື່ອມຈາກສະມາທິນັ້ນບໍ?

ອັດສະຊິ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຍ້ອນເຫດນັ້ນແລ ຯລຯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຖ້າອະຣິຍະສາວົກນັ້ນສະເຫວີຍສຸກຂະເວທະນາ ກໍຮູ້ແຈ້ງວ່າ ສຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ ຖ້າທ່ານສະເຫວີຍທຸກຂະເວທະນາ ກໍຮູ້ແຈ້ງວ່າ ທຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ ຖ້າທ່ານສະເຫວີຍອະທຸກຂະມະສຸກຂະເວທະນາ ກໍຮູ້ແຈ້ງວ່າ ອະທຸກຂະມະສຸກຂະເວທະນານັ້ນບໍ່ທ່ຽງ ຯລຯ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ

ຖ້າທ່ານສະເຫວີຍສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍສຸກຂະເວທະນານັ້ນ ຖ້າທ່ານສະເຫວີຍທຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍທຸກຂະເວທະນານັ້ນ ຖ້າທ່ານສະເຫວີຍອະທຸກຂະມະສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍອະທຸກຂະມະສຸກຂະເວທະນານັ້ນ

ຖ້າອະຣິຍະສາວົກນັ້ນ ສະເຫວີຍເວທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ ຖ້າອະຣິຍະສາວົກສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ຫຼັງຈາກຕາຍໄປກໍຮູ້ແຈ້ງວ່າ ຄວາມສະເຫວີຍອາລົມທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ນອນ

ອັດສະຊິ ຍ້ອນອາໄສນ້ຳມັນແລະໄສ້ ຕະກຽງນ້ຳມັນຈຶ່ງຕິດຢູ່ໄດ້ ຍ້ອນໝົດນ້ຳມັນແລະໄສ້ ຕະກຽງນ້ຳມັນນັ້ນຈຶ່ງໝົດເຊື້ອດັບໄປ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ

ເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ ເມື່ອສະເຫວີຍ ເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ຫຼັງຈາກຕາຍໄປ ກໍຮູ້ແຈ້ງວ່າ ຄວາມສະເຫວີຍອາລົມທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ນອນ

**ອັດສະຊິສູດທີ ໖ ຈົບ**

# ໗. ເຂມະກະສູດ

## ວ່າດ້ວຍພຣະເຂມະກະ

[໗໙] ສະໄໝໜຶ່ງ ພຣະເຖຣະຈຳນວນຫຼາຍຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີສະໄໝນັ້ນ ທ່ານພຣະເຂມະກະອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ພັກຢູ່ທີ່ພະທະຣິກາຣາມ

ເມື່ອໃນເວລາຄ່ຳ ພຣະເຖຣະທັງຫຼາຍອອກຈາກທີ່ຫຼີກຫຼີກແລ້ວ ຮຽກທ່ານພຣະທາສະກະມາກ່າວວ່າ ມາເທີ້ນ ທ່ານທາສະກະ ທ່ານຈົ່ງເຂົ້າໄປຫາພິກຂຸເຂມະກະຮອດບ່ອນຢູ່ແລ້ວບອກວ່າ ທ່ານເຂມະກະ ພຣະເຖຣະທັງຫຼາຍຖາມເຖິງທ່ານວ່າ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງ ບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ?

ທ່ານພຣະທາສະກະຮັບຄຳແລ້ວ ເຂົ້າໄປຫາທ່ານພຣະເຂມະກະຮອດບ່ອນຢູ່ໄດ້ກ່າວວ່າ ທ່ານເຂມະກະ ພຣະເຖຣະທັງຫຼາຍຖາມເຖິງທ່ານວ່າ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງ ບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ປາກົດບໍ?

ທ່ານພຣະເຂມະກະຕອບວ່າ ທ່ານຜູ້ມີອາຍຸ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາ ມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ດັ່ງນັ້ນ ທ່ານພຣະທາສະກະເຂົ້າໄປຫາພຣະເຖຣະທັງຫຼາຍຮອດບ່ອນຢູ່ແລ້ວຮຽນວ່າ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸເຂມະກະກ່າວວ່າ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ

ມາເທີ້ນ ທ່ານທາສະກະ ທ່ານຈົ່ງເຂົ້າໄປຫາພິກຂຸເຂມະກະຮອດບ່ອນຢູ່ແລ້ວບອກວ່າ ທ່ານເຂມະກະ ພຣະເຖຣະທັງຫຼາຍຝາກມາຖາມວ່າ ທ່ານຜູ້ມີອາຍຸ ອຸປາທານຂັນ ໕ ປະການນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ທ່ານເຂມະກະພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້

ທ່ານພຣະທາສະກະຮັບຄຳແລ້ວ ເຂົ້າໄປຫາທ່ານພຣະເຂມະກະຮອດບ່ອນຢູ່ ຯລຯ ທ່ານເຂມະກະ ພຣະເຖຣະທັງຫຼາຍຝາກມາຖາມວ່າ ທ່ານຜູ້ມີອາຍຸ ອຸປາທານຂັນ ໕ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຮູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ທ່ານເຂມະກະພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້

ທ່ານຜູ້ມີອາຍຸ ອຸປາທານຂັນ ໕ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຮູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຂ້ານ້ອຍ ບໍ່ພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້ເລີຍ

ດັ່ງນັ້ນ ທ່ານພຣະທາສະກະເຂົ້າໄປຫາພຣະເຖຣະທັງຫຼາຍ ຮອດບ່ອນຢູ່ແລ້ວຮຽນວ່າ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸເຂມະກະກ່າວວ່າ ອຸປາທານຂັນ ໕ ປະການນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຮູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຂ້ານ້ອຍ ບໍ່ພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້ເລີຍ

ມາເທີ້ນ ທ່ານທາສະກະ ທ່ານຈົ່ງເຂົ້າໄປຫາພິກຂຸເຂມະກະຮອດບ່ອນຢູ່ແລ້ວບອກວ່າ ທ່ານເຂມະກະ ພຣະເຖຣະທັງຫຼາຍຝາກມາຖາມວ່າ ອຸປາທານຂັນ ໕ ປະການນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຮູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຮູ້ວ່າ ຫາກທ່ານເຂມະກະບໍ່ພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້ເລີຍ ຖ້າເຊັ່ນນັ້ນ ທ່ານເຂມະກະກໍເປັນພຣະອະຣະຫັນຕະຂີນາສົບ

ທ່ານພຣະທາສະກະຮັບຄຳແລ້ວເຂົ້າໄປຫາທ່ານພຣະເຂມະກະຮອດບ່ອນຢູ່ ຯລຯ ທ່ານເຂມະກະ ພຣະເຖຣະທັງຫຼາຍຝາກມາຖາມວ່າ ອຸປາທານຂັນ ໕ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຮູ້ວ່າ ຫາກທ່ານເຂມະກະບໍ່ພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ

ອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້ເລີຍ ຖ້າເຊັ່ນນັ້ນ ທ່ານເຂມະກະກໍເປັນພຣະອະຣະຫັນຕະຂີນາສົບ

ທ່ານຜູ້ມີອາຍຸ ອຸປາທານຂັນ ໕ ປະການນີ້ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຜົມບໍ່ພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້ ແລະ ຂ້ານ້ອຍກໍບໍ່ໄດ້ເປັນພຣະອະຣະຫັນຕະຂີນາສົບ ແຕ່ຂ້ານ້ອຍເຂົ້າໃຈວ່າ ເຮົາມີໃນອຸປາທານຂັນ ໕ ປະການ ແລະ ຂ້ານ້ອຍກໍບໍ່ໄດ້ພິຈາລະນາເຫັນວ່າ ເຮົາເປັນແນວນີ້

ຄັ້ງນັ້ນ ທ່ານພຣະທາສະກະເຂົ້າໄປຫາພຣະເຖຣະທັງຫຼາຍ ຮອດບ່ອນຢູ່ແລ້ວຮຽນວ່າ ທ່ານຜູ້ມີອາຍຸທັງຫຼາຍ ພິກຂຸເຂມະກະກ່າວວ່າ ອຸປາທານຂັນ ໕ ປະການນີ້ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ໄດ້ແກ່

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຂ້ານ້ອຍ ບໍ່ພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາອັນໃດ ໆ ໃນອຸປາທານຂັນ ໕ ປະການນີ້ເລີຍ ແລະ ຂ້ານ້ອຍກໍບໍ່ໄດ້ເປັນພຣະອະຣະຫັນຕະຂີນາສົບ ແຕ່ຂ້ານ້ອຍເຂົ້າໃຈວ່າ ເຮົາມີ ໃນອຸປາທານຂັນ ໕ ປະການ ແລະ ຂ້ານ້ອຍກໍບໍ່ໄດ້ພິຈາລະນາເຫັນວ່າ ເຮົາເປັນແນວນີ້

ມາເທີ້ນ ທ່ານທາສະກະ ທ່ານຈົ່ງເຂົ້າໄປຫາພິກຂຸເຂມະກະຮອດບ່ອນຢູ່ແລ້ວບອກວ່າ ທ່ານເຂມະກະ ພຣະເຖຣະທັງຫຼາຍຝາກມາຖາມວ່າ ຄຳທີ່ທ່ານກ່າວວ່າ ເຮົາມີ ນັ້ນຄືແນວໃດ ທ່ານກ່າວວ່າ ເຮົາມີຣູບ ກ່າວວ່າ ເຮົາມີນອກຈາກຣູບ ທ່ານກ່າວວ່າ ເຮົາມີເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ທ່ານກ່າວວ່າ ເຮົາມີວິນຍານ ກ່າວວ່າ ເຮົາມີນອກຈາກວິນຍານ ທ່ານເຂມະກະ ຄຳທີ່ທ່ານກ່າວວ່າ ເຮົາມີ ນັ້ນຄືແນວໃດ?

ທ່ານພຣະທາສະກະຮັບຄຳແລ້ວ ເຂົ້າໄປຫາທ່ານພຣະເຂມະກະຮອດບ່ອນຢູ່ໄດ້ກ່າວວ່າ ທ່ານ ເຂມະກະ ພຣະເຖຣະທັງຫຼາຍ ຝາກມາຖາມວ່າ ຄຳທີ່ທ່ານກ່າວວ່າ ເຮົາມີ ນັ້ນຄືແນວໃດ ທ່ານກ່າວວ່າ ເຮົາມີຣູບ ກ່າວວ່າ ເຮົາມີນອກຈາກຣູບ ທ່ານກ່າວວ່າ ເຮົາມີເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ທ່ານກ່າວວ່າ ເຮົາມີວິນຍານ ກ່າວວ່າ ເຮົາມີນອກຈາກວິນຍານ ທ່ານເຂມະກະ ຄຳທີ່ທ່ານກ່າວວ່າ ເຮົາມີ ນັ້ນຄືແນວໃດ?

ພໍເທີ້ນ ທ່ານທາສະກະ ການຍ່າງໄປຍ່າງມາຢູ່ແນວ ນີ້ຈະມີປະໂຫຍດອັນໃດ? ທ່ານຈົ່ງຈັບໄມ້ຄ້ອນເທົ້າມາ ຂ້ານ້ອຍຈັກເຂົ້າໄປຫາພຣະເຖຣະທັງຫຼາຍເອງ

ລຳດັບນັ້ນ ທ່ານພຣະເຂມະກະຍັນໄມ້ຄ້ອນເທົ້າເຂົ້າໄປຫາພຣະເຖຣະທັງຫຼາຍຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ພຣະເຖຣະທັງຫຼາຍໄດ້ຖາມວ່າ ທ່ານເຂມະກະ ຄຳທີ່ທ່ານກ່າວວ່າ ເຮົາມີ ນັ້ນຄືແນວໃດ ທ່ານກ່າວວ່າ ເຮົາມີຮູບ ກ່າວວ່າ ເຮົາມີນອກຈາກຮູບ ທ່ານກ່າວວ່າ ເຮົາມີເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ທ່ານກ່າວວ່າ ເຮົາມີວິນຍານ ກ່າວວ່າ ເຮົາມີນອກຈາກວິນຍານ ທ່ານເຂມະກະ ຄຳທີ່ທ່ານກ່າວວ່າ ເຮົາມີ ນັ້ນຄືແນວໃດ?

ທ່ານຜູ້ມີອາຍຸທັງຫຼາຍ ຂ້ານ້ອຍບໍ່ໄດ້ກ່າວວ່າ ເຮົາມີຮູບ ທັງບໍ່ໄດ້ກ່າວວ່າ ເຮົາມີນອກຈາກຮູບ ຂ້ານ້ອຍໄມ່ໄດ້ກ່າວວ່າ ເຮົາມີເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ທັງບໍ່ໄດ້ກ່າວວ່າ ເຮົາມີນອກຈາກວິນຍານ ແຕ່ຂ້ານ້ອຍເຂົ້າໃຈວ່າ ເຮົາມີ ໃນອຸປາທານຂັນ ໕ ປະການ ແລະ ຂ້ານ້ອຍກໍບໍ່ໄດ້ພິຈາລະນາເຫັນວ່າ ເຮົາເປັນແນວນີ້

ທ່ານຜູ້ມີອາຍຸທັງຫຼາຍ ປຽບຄື ກິ່ນດອກບົວກໍດີ ດອກບົວຫຼວງກໍດີ ດອກບຸນທະຣິກກໍດີ ຜູ້ທີ່ກ່າວວ່າ ກິ່ນຂອງໃບ ວ່າ ກິ່ນຂອງສີ ຫຼື ວ່າ ກິ່ນຂອງເກສອນ

ແນວນີ້ ຊື່ວ່າກ່າວຖືກຕ້ອງບໍ?

ບໍ່ຖືກຕ້ອງ ທ່ານຜູ້ມີອາຍຸ

ທ່ານຜູ້ມີອາຍຸທັງຫຼາຍ ເມື່ອຈະຕອບໃຫ້ຖືກຕ້ອງ ຄວນຕອບແນວໃດ?

ທ່ານຜູ້ມີອາຍຸ ເມື່ອຈະຕອບໃຫ້ຖືກຕ້ອງ ຄວນຕອບວ່າ ກິ່ນຂອງດອກ

ທ່ານຜູ້ມີອາຍຸທັງຫຼາຍ ຂ້ານ້ອຍໄມ່ໄດ້ກ່າວວ່າ ເຮົາມີຮູບ ທັງບໍ່ໄດ້ກ່າວວ່າ ເຮົາມີນອກຈາກຮູບ ຂ້ານ້ອຍບໍ່ໄດ້ກ່າວວ່າ ເຮົາມີເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ທັງບໍ່ໄດ້ກ່າວວ່າ ເຮົາມີນອກຈາກວິນຍານ ແຕ່ຂ້ານ້ອຍເຂົ້າໃຈວ່າ ເຮົາມີ ໃນອຸປາທານຂັນ ໕ ປະການ ແລະ ຂ້ານ້ອຍກໍບໍ່ໄດ້ພິຈາລະນາເຫັນວ່າ ເຮົາເປັນແນວນີ້?

ໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການພຣະອະຣິຍະສາວົກລະໄດ້ແລ້ວກໍຈິງ ແຕ່ທ່ານກໍຍັງຖອນມານະ ສັນທະ ແລະ ອະນຸໄສຍ່າງລະອຽດໃນອຸປາທານຂັນ ໕ ປະການວ່າ ເຮົາມີ ບໍ່ໄດ້ ຕໍ່ມາ ທ່ານພິຈາລະນາເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນອຸປາທານຂັນ ໕ ປະການວ່າ ຮູບເປັນແນວນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແນວນີ້ ຄວາມດັບແຫ່ງຮູບ

ເປັນແບບນີ້ ເວທະນາເປັນແບບນີ້ ຯລຯ ສັນຍາເປັນແບບນີ້ ຯລຯ ສັງຂານເປັນແບບນີ້ ຯລຯ ວິນຍານເປັນແບບນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແບບນີ້ ຄວາມດັບແຫ່ງວິນຍານເປັນແບບນີ້ ເມື່ອທ່ານພິຈາລະນາເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນອຸປາທານຂັນ ໕ ປະການນີ້ຢູ່ ເຖິງແມ່ນທ່ານຈະຍັງຖອນມານະ ສັນທະ ແລະ ອະນຸໄສຢ່າງລະອຽດໃນອຸປາທານຂັນ ໕ ປະການວ່າ ເຮົາມີ ບໍ່ໄດ້ ແຕ່ມານະ ສັນທະ ແລະ ອະນຸໄສກໍຖືກເພີກຖອນຂຶ້ນໄດ້

ຜ້າສົກກະປົກເປື້ອນມົນທິນ ເຈົ້າຂອງຜ້າມອບຜ້ານັ້ນໃຫ້ແກ່ຊ່າງຊັກຜ້າ ຊ່າງຊັກຜ້າຍ່ອງຜ້ານັ້ນໃນນໍ້າດ່າງເກືອ ນໍ້າດ່າງຂີ້ເຖົ່າ ຫຼືໃນມູນງົວແລ້ວ ຊັກໃນນໍ້າສະອາດ ຜ້ານັ້ນສະອາດກໍຈິງ ແຕ່ຜ້ານັ້ນກໍຍັງບໍ່ໝົດກິ່ນນໍ້າດ່າງເກືອ ກິ່ນນໍ້າດ່າງຂີ້ເຖົ່າ ຫຼືກິ່ນມູນງົວທີ່ຕິດຢູ່ ຊ່າງຊັກຜ້າມອບຜ້ານັ້ນຄືນໃຫ້ເຈົ້າຂອງໄປ ເຈົ້າຂອງເກັບຜ້ານັ້ນໃສ່ໄວ້ໃນຫີບ ອົບດ້ວຍກິ່ນ ແມ່ນຜ້ານັ້ນຈະຍັງບໍ່ໝົດກິ່ນນໍ້າດ່າງເກືອ ກິ່ນນໍ້າດ່າງຂີ້ເຖົ່າ ຫຼື ກິ່ນມູນງົວທີ່ຕິດຢູ່ ແຕ່ກິ່ນນັ້ນກໍຫາຍໄປ ແມ່ນສັນໃດທ່ານຜູ້ມີອາຍຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັງໂຍດເບື້ອງຕ່ຳ ໕ ປະການ ພຣະອະຣິຍະສາວົກລະໄດ້ແລ້ວກໍຈິງ ແຕ່ທ່ານກໍຍັງຖອນມານະ ສັນທະ ແລະ ອະນຸໄສຢ່າງລະອຽດໃນອຸປາທານຂັນ ໕ ປະການວ່າ ເຮົາມີ ບໍ່ໄດ້ ຕໍ່ມາ ທ່ານພິຈາລະນາເຫັນຄວາມເກີດຂຶ້ນ ແລະຄວາມເສື່ອມໄປໃນອຸປາທານຂັນ ໕ ປະການວ່າ ຮູບເປັນແບບນີ້ ຄວາມເກີດຂຶ້ນແຫ່ງຮູບເປັນແບບນີ້ ຄວາມດັບແຫ່ງຮູບເປັນແບບນີ້ ເວທະນາເປັນແບບນີ້ ຯລຯ ສັນຍາເປັນແບບນີ້ ຯລຯ ສັງຂານເປັນແບບນີ້ ຯລຯ ວິນຍານເປັນແບບນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນແບບນີ້ ຄວາມດັບແຫ່ງວິນຍານເປັນແບບນີ້ ເມື່ອທ່ານພິຈາລະນາເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນອຸປາທານຂັນ ໕ ປະການນີ້ຢູ່ ເຖິງແມ່ນທ່ານຈະຍັງຖອນມານະ ສັນທະ ແລະ ອະນຸໄສຢ່າງລະອຽດໃນອຸປາທານຂັນ ໕ ປະການວ່າ ເຮົາມີ ບໍ່ໄດ້ ແຕ່ມານະ ສັນທະ ແລະ ອະນຸໄສກໍຖືກເພີກຖອນຂຶ້ນໄດ້

ເມື່ອທ່ານພຣະເຂມະກະກ່າວແບບນີ້ແລ້ວ ພຣະເຖຣະທັງຫຼາຍໄດ້ກ່າວວ່າ ພວກຂ້ານ້ອຍບໍ່ໄດ້ຖາມມຸ້ງບຽດບຽນທ່ານເລີຍ ແຕ່ທ່ານເຂມະກະສາມາດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ເຊິ່ງຄຳສັ່ງສອນຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນໂດຍພິດສະດານ ຕາມທີ່ທ່ານບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍແລ້ວໂດຍພິດສະດານ

ທ່ານພຣະເຂມະກະ ກໍໄດ້ກ່າວແບບນີ້ແລ້ວ ພຣະເຖຣະທັງຫຼາຍມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງທ່ານເຂມະກະ ກໍເມື່ອທ່ານພຣະເຂມະກະກ່າວໄວຍາກອນພາສິດນີ້ຢູ່ ຈິດຂອງພຣະເຖຣະປະມານ ໖໐ ອົງ ແລະຂອງທ່ານພຣະເຂມະກະ ກໍລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ

**ເຂມະກະສູດທີ ໗ ຈົບ**

# ๗. ສັນນະສູດ

## ວ່າດ້ວຍພຣະສັນນະ

[໙໐] ສະໄໝໜຶ່ງ ພຣະເຖຣະຈຳນວນຫຼາຍຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ເມື່ອໃນເວລາຄ່ຳ ທ່ານພຣະສັນນະອອກຈາກທີ່ຫຼີບຫຼີກແລ້ວ ຖືລູກກະແຈຍ່າງເຂົ້າອອກວິຫານກ່າວວ່າ ຂໍທ່ານທັງຫຼາຍ ຈົ່ງຕັກເຕືອນ ພ່ຳສອນ ສະແດງທຳມີກະຖາແກ່ຂ້ານ້ອຍ ພໍທີ່ຂ້ານ້ອຍຈະເຫັນທຳໄດ້

ເມື່ອທ່ານພຣະສັນນະກ່າວແນວນີ້ແລ້ວ ພຣະເຖຣະທັງຫຼາຍ ໄດ້ກ່າວກັບທ່ານວ່າ ທ່ານສັນນະ ຮູບບໍ່ທ່ຽງ ເວທະນາບໍ່ທ່ຽງ ສັນຍາບໍ່ທ່ຽງ ສັງຂານບໍ່ທ່ຽງ ວິນຍານບໍ່ທ່ຽງ ຮູບເປັນອະນັດຕາ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນອະນັດຕາ ສັງຂານທັງປວງບໍ່ທ່ຽງ ທຳທັງປວງເປັນອະນັດຕາ

ລຳດັບນັ້ນ ທ່ານພຣະສັນນະໄດ້ມີຄວາມຄິດວ່າ ແມ່ນເຮົາກໍມີຄວາມຄິດວ່າ ຮູບບໍ່ທ່ຽງ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານບໍ່ທ່ຽງ ຮູບເປັນອະນັດຕາເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນອະນັດຕາ ສັງຂານທັງປວງບໍ່ທ່ຽງ ທຳທັງປວງເປັນອະນັດຕາ ກໍເມື່ອເປັນແນວນີ້ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນທຳເປັນທີ່ລະງັບສັງຂານທັງປວງ ເປັນທີ່ສະລະອຸປະທິທັງປວງ ເປັນທີ່ໝົດຕັນຫາ ເປັນທີ່ສຳຣອກຣາຄະ ເປັນທີ່ດັບ (ທຸກ) ເປັນທີ່ດັບ (ຕັນຫາ) ຄວາມສະດຸ້ງຢ້ານແລະອຸປາທານກໍເກີດຂຶ້ນ ໃຈຈຶ່ງທໍ້ຖອຍທໍ້ ເມື່ອເປັນແນວນີ້ ອັນໃດນໍເປັນອັດຕາຂອງເຮົາ ແຕ່ຄວາມຄິດແນວນີ້ຍ່ອມບໍ່ມີແກ່ຜູ້ເຫັນທຳ ໃຜນໍຈະສະແດງທຳແກ່ເຮົາ ພໍທີ່ເຮົາຈະເຫັນທຳໄດ້

ລຳດັບນັ້ນ ທ່ານພຣະສັນນະໄດ້ມີຄວາມຄິດຕໍ່ໄປວ່າ ທ່ານອານົນນີ້ຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ເຊິ່ງພຣະສາດສະດາຊົງສັນເສີນ ແລະ ເພື່ອນພົມມະຈາຣີທັງຫຼາຍ ຜູ້ເປັນວິນຍູຊົນກໍຍ້ອງຍໍ ຈະສາມາດສະແດງທຳແກ່ເຮົາ ພໍທີ່ເຮົາຈະເຫັນທຳໄດ້ ອັນໜຶ່ງ ເຮົາກໍມີຄວາມຄຸ້ນເຄີຍໃນທ່ານອານົນຫຼາຍ ທາງທີ່ດີ ເຮົາຄວນເຂົ້າໄປຫາທ່ານອານົນ ຮອດບ່ອນຢູ່

ຕໍ່ມາ ທ່ານພຣະສັນນະເກັບມ້ຽນເສນາສະນະແລ້ວ ຖືບາດແລະຈີວອນ ເຂົ້າໄປຫາທ່ານພຣະອານົນເຖິງໂຄສິຕາຣາມ ເຂດນະຄອນໂກສຳພີ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນໄດ້ກ່າວ ວ່າ

ທ່ານອານົນ ສະໄໝໜຶ່ງ ຂ້ານ້ອຍ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ເມື່ອໃນເວລາຄ່ຳ ຂ້ານ້ອຍ ອອກຈາກທີ່ຫຼີບຫຼີກ ຖືລູກກະແຈຍ່າງເຂົ້າອອກວິຫານ

ໄດ້ກ່າວວ່າ ຂໍທ່ານທັງຫຼາຍ ຈົ່ງຕັກເຕືອນ ພໍ່າສອນ ສະແດງທຳມີກະຖາແກ່ຂ້ານ້ອຍ ພໍທີ່ຂ້ານ້ອຍຈະເຫັນທຳໄດ້ ເມື່ອຂ້ານ້ອຍກ່າວແນວນີ້ແລ້ວ ພຣະເຖຣະທັງຫຼາຍໄດ້ກ່າວວ່າ ສັນນະ ຮູບບໍ່ທ່ຽງ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານບໍ່ທ່ຽງ ຮູບເປັນອະນັດຕາ ฯລฯ ວິນຍານເປັນອະນັດຕາ ສັງຂານທັງປວງບໍ່ທ່ຽງ ທຳທັງປວງເປັນອະນັດຕາ

ທ່ານຜູ້ມີອາຍຸ ຂ້ານ້ອຍໄດ້ມີຄວາມຄິດວ່າ ແມ່ນເຮົາກໍມີຄວາມຄິດວ່າ ຮູບບໍ່ທ່ຽງ ฯລฯ ວິນຍານບໍ່ທ່ຽງ ຮູບເປັນອະນັດຕາ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານເປັນອະນັດຕາ ສັງຂານທັງປວງບໍ່ທ່ຽງ ທຳທັງປວງເປັນອະນັດຕາ ກໍເມື່ອເປັນແນວນີ້ ຈິດຂອງເຮົາບໍ່ແລ່ນໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນທຳເປັນທີ່ລະງັບສັງຂານທັງປວງ ເປັນທີ່ສະລະອຸປະທິທັງປວງ ເປັນທີ່ໝົດຕັນຫາ ເປັນທີ່ສຳຣອກຣາຄະ ເປັນທີ່ດັບ (ທຸກ) ເປັນທີ່ດັບ (ຕັນຫາ) ຄວາມສະດຸ້ງຢ້ານ ແລະ ອຸປາທານກໍເກີດຂຶ້ນ ໃຈຈຶ່ງຫຍໍ້ທໍ້ ເມື່ອເປັນແນວນີ້ ອັນໃດນໍ? ເປັນອັດຕາຂອງເຮົາ ແຕ່ຄວາມຄິດແນວນີ້ຍ່ອມບໍ່ມີແກ່ຜູ້ເຫັນທຳ ແລ້ວໃຜນໍ? ຈະສະແດງທຳແກ່ເຮົາ ພໍທີ່ເຮົາຈະເຫັນທຳໄດ້

ທ່ານຜູ້ມີອາຍຸ ຂ້ານ້ອຍໄດ້ມີຄວາມຄິດຕໍ່ໄປວ່າ ທ່ານອານົນນີ້ຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ເຊິ່ງພຣະສາດສະດາຊົງສັນເສີນແລະເພື່ອນພົມມະຈາຣີທັງຫຼາຍຜູ້ເປັນວິນຍູຊົນກໍຍ້ອງຍໍ ຈະສາມາດສະແດງທຳແກ່ເຮົາ ພໍທີ່ເຮົາຈະເຫັນທຳໄດ້ ອັນໜຶ່ງ ເຮົາກໍມີຄວາມຄຸ້ນເຄີຍໃນທ່ານອານົນຫຼາຍ ທາງທີ່ດີ ເຮົາຄວນເຂົ້າໄປຫາທ່ານອານົນຮອດບ່ອນຢູ່ ຂໍທ່ານອານົນຈົ່ງຕັກເຕືອນ ພໍ່າສອນ ສະແດງທຳມີກະຖາແກ່ຂ້ານ້ອຍ ພໍທີ່ຂ້ານ້ອຍຈະເຫັນທຳໄດ້ເທີ້ນ

ທ່ານພຣະອານົນກ່າວວ່າ ແມ່ນດ້ວຍເຫດພຽງທີ່ນີ້ ຂ້ານ້ອຍ ກໍພໍໃຈຍິນດີກັບທ່ານສັນນະ ທ່ານສັນນະໄດ້ທຳຄວາມເຫັນໃຫ້ແຈ່ມແຈ້ງ ທຳລາຍຄວາມດື້ດຶງແລ້ວ ທ່ານສັນນະ ທ່ານຈົ່ງງ່ຽງໂສຕະລົງ ທ່ານສົມຄວນຈະຮູ້ທຳໄດ້ຢ່າງແຈ່ງຊັດ

ລຳດັບນັ້ນ ປີຕິແລະປາໂມດຢ່າງຍິ່ງ ໄດ້ເກີດຂຶ້ນແກ່ທ່ານພຣະສັນນະດ້ວຍເຫດພຽງທີ່ນັ້ນວ່າ ເຮົາສົມຄວນຈະຮູ້ທຳໄດ້ຢ່າງແຈ່ງຊັດ

ທ່ານພຣະອານົນກ່າວວ່າ ທ່ານສັນນະ ຂ້ານ້ອຍ ໄດ້ສະດັບຄຳນີ້ມາສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າຜູ້ຕັດສອນພິກຂຸກັດຈານະໂຄດຢູ່ວ່າ ກັດຈານະ ສ່ວນຫຼາຍ ໂລກນີ້ອາໄສບ່ອນສຸດ ໒ ຢ່າງ ຄື (໑) ຄວາມມີ (໒) ຄວາມບໍ່ມີ

ກໍເມື່ອບຸກຄົນເຫັນຄວາມເກີດຂຶ້ນຂອງໂລກ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ຄວາມບໍ່ມີໃນໂລກກໍບໍ່ມີ ເມື່ອບຸກຄົນເຫັນຄວາມດັບຂອງໂລກ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ຄວາມມີໃນໂລກກໍບໍ່ມີ

ភັດຈານະ ສ່ວນຫຼາຍ ໂລກນີ້ພົວພັນຢູ່ດ້ວຍອຸບາຍ ແລະ ຄວາມຢຶດໝັ້ນອັນເປັນເຫດຖື ໝັ້ນ ແຕ່ອະຣິຍະສາວົກນີ້ບໍ່ເຂົ້າໄປຢຶດໝັ້ນອຸບາຍ ແລະ ຄວາມຢຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປ ຕັ້ງໝັ້ນຖືໝັ້ນແລະນອນຈົມວ່າ ອັດຕາຂອງເຮົາ ບໍ່ເຄືອບແຄງ ບໍ່ສົງໄສວ່າ ທຸກນັ້ນເອງ ເມື່ອ ເກີດຍ່ອມເກີດຂຶ້ນ ທຸກເມື່ອດັບຍ່ອມດັບໄປ ອະຣິຍະສາວົກນັ້ນ ມີຍານຫຍັ່ງຮູ້ໃນເລື້ອງນີ້ໂດຍບໍ່ ຕ້ອງເຊື່ອຜູ້ອື່ນເລີຍ

ກັດຈານະ ດ້ວຍເຫດພຽງທີ່ນີ້ ຈັດວ່າເປັນສໍາມາທິດຖິ

ກັດຈານະ ບ່ອນສຸດຢ່າງທີ ໑ ນີ້ ຄື ສິ່ງທັງປວງມີຢູ່ ບ່ອນສຸດຢ່າງທີ ໒ ນີ້ ຄື ສິ່ງທັງ ປວງບໍ່ມີ ຕະຖາຄົດບໍ່ເຂົ້າໄປໃກ້ບ່ອນສຸດທັງ ໒ ນີ້ສະແດງທໍາໂດຍສາຍກາງວ່າ ຍ້ອນອະວິດຊາ ເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມເກີດຂຶ້ນແຫ່ງ ກອງທຸກທັງມວນນີ້ ມີໄດ້ດ້ວຍປະການແນວນີ້ ຍ້ອນອະວິດຊານັ້ນເອງ ດັບບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ ຍ້ອນສັງຂານດັບ ວິນຍານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ ດ້ວຍປະການແນວນີ້

ທ່ານພຣະສັນນະກ່າວວ່າ ທ່ານອານົນ ຂໍ້ທີ່ເພື່ອນພົມມະຈາຣີທັງຫຼາຍ ຜູ້ເຊັ່ນກັບທ່ານ ເປັນຜູ້ອະນຸເຄາະ ມຸ້ງປະໂຫຍດ ວ່າກ່າວ ພໍ່າສອນ ຍ່ອມເປັນແນວນັ້ນ ແລະ ຍ້ອນໄດ້ຟັງທໍາມະ ເທດສະໜານີ້ຂອງທ່ານອານົນ ຂ້ານ້ອຍຈຶ່ງໄດ້ບັນລຸທໍາ

**ສັນນະສູດທີ ໙ ຈົບ**

## ໑໐. ຣາຫຸລະສູດ

### ວ່າດ້ວຍພຣະຣາຫຸນ

[໑໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາຫຸນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິ ວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ ຈະເລີນ ເມື່ອບຸກຄົນຮູ້ ເຫັນແນວໃດ ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະມານານຸໄສໃນ ກາຍທີ່ມີວິນຍານນີ້ ແລະ ໃນນິມິດທັງປວງໃນພາຍນອກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາຫຸນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະ ນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ

ບຸກຄົນເຫັນຮູບທັງໝົດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາແນວໃດແນວໜຶ່ງ ຯລຯ
ສັນຍາແນວໃດແນວໜຶ່ງ ຯລຯ
ສັງຂານແນວໃດແນວໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຯລຯ ບຸກຄົນເຫັນວິນຍານທັງໝົດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ຣາຫຸນ ເມື່ອບຸກຄົນຮູ້ ເຫັນແນວນີ້ ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະໃນນິມິດທັງປວງໃນພາຍນອກ

**ຣາຫຸລະສູດທີ ໙ ຈົບ**

# ໑໐. ທຸຕິຍະຣາຫຸລະສູດ

## ວ່າດ້ວຍພຣະຣາຫຸນ ສູດທີ ໘

[໙໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາຫຸນນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ ເຫັນແນວໃດ ໃຈຈຶ່ງຈະປາສະຈາກອະຫັງການ ມະມັງການ ແລະ ມານານຸໄສໃນກາຍທີ່ມີວິນຍານນີ້ ແລະ ໃນນິມິດທັງປວງໃນພາຍນອກ ກ້າວລ່ວງມານະດ້ວຍດີ ສະງົບລະງັບ ລຸດພົ້ນດີແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາຫຸນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຯລຯ ໄກຫຼືໃກ້ກໍຕາມ ບຸກຄົນເຫັນຮູບທັງໝົດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນແລ້ວ ຍ້ອນບໍ່ຖືໝັ້ນ

ເວທະນາແນວໃດແນວໜຶ່ງ ຯລຯ
ສັນຍາແນວໃດແນວໜຶ່ງ ຯລຯ
ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ບຸກຄົນເຫັນວິນຍານທັງໝົດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນແລ້ວ ຍ້ອນບໍ່ຖືໝັ້ນ

ຣາຫຸນ ເມື່ອບຸກຄົນຮູ້ ເຫັນແນວນີ້ ໃຈຈຶ່ງຈະປາສະຈາກອະຫັງການ ມະມັງການແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະໃນນິມິດທັງປວງໃນພາຍນອກ ກ້າວລ່ວງມານະດ້ວຍດີ ສະງົບລະງັບ ລຸດພົ້ນດີແລ້ວ

**ທຸຕິຍະຣາຫຸລະສູດທີ ໑໐ ຈົບ**

**ເຖຣະວັກທີ ໔ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

໑. ອານັນທະສູດ
໒. ຍະມະກະສູດ
໓. ວັກກະລິສູດ
໔. ເຂມະກະສູດ
໕. ຣາຫຸລະສູດ
໖. ຕິດສະສູດ
໗. ອະນຸຣາທະສູດ
໘. ອັດສະຊິສູດ
໙. ສັນນະສູດ
໑໐. ທຸຕິຍະຣາຫຸລະສູດ

# ໕. ປຸບຜະວັກ

## ໝວດວ່າດ້ວຍອຸປະມາດ້ວຍດອກໄມ້

# ໑. ນະທີສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳ

[໙໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳໄຫຼລົງຈາກພູ ພັດ (ຫຍ້າໃບໄມ້ ແລະຂອນໄມ້ເປັນຕົ້ນ) ໄປໃນພາຍໃຕ້ ໄຫຼໄປໄກ ມີແລວນ້ຳໄຫຼແຮງ ທີ່ຝັ່ງທັງ ໒ ຂອງແມ່ນ້ຳນັ້ນ ຖ້າແມ່ນຕົ້ນເລົາທັງຫຼາຍເພິ່ງເກີດ ຕົ້ນເລົາເຫຼົ່ານັ້ນ ກໍຈະລູ່ໄປຕາມແມ່ນ້ຳນັ້ນ ຖ້າແມ່ນຫຍ້າຄາທັງຫຼາຍເພິ່ງເກີດ ຫຍ້າຄາເຫຼົ່ານັ້ນ ກໍຈະລູ່ໄປຕາມແມ່ນ້ຳນັ້ນ ຖ້າແມ່ນຫຍ້າມຸ້ງກະຕ່າຍທັງຫຼາຍເພິ່ງເກີດ ຫຍ້າມຸ້ງກະຕ່າຍເຫຼົ່ານັ້ນກໍຈະລູ່ໄປຕາມແມ່ນ້ຳນັ້ນ ຖ້າແມ່ນຫຍ້າຄົມບາງທັງຫຼາຍເພິ່ງເກີດ ຫຍ້າຄົມບາງເຫຼົ່ານັ້ນກໍຈະລູ່ໄປຕາມແມ່ນ້ຳນັ້ນ ຖ້າຕົ້ນໄມ້ທັງຫຼາຍເພິ່ງເກີດ ຕົ້ນໄມ້ເຫຼົ່ານັ້ນ ກໍຈະລູ່ໄປຕາມແມ່ນ້ຳນັ້ນ ບຸຣຸດຖືກກະແສນ້ຳພັດໄປຢູ່ ຖ້າເພິ່ງຈັບຕົ້ນເລົາ ຕົ້ນເລົາກໍຈະລຸດໄປ ເຂົາເພິ່ງເຖິງຄວາມພິນາດ ຍ້ອນຕົ້ນເລົານັ້ນລຸດໄປ ຖ້າເພິ່ງຈັບຫຍ້າຄາ ຫຍ້າມຸ້ງກະຕ່າຍ ຫຍ້າຄົມບາງ ຫຼື ຕົ້ນໄມ້ ຫຍ້າຄາເປັນຕົ້ນເຫຼົ່ານັ້ນ ກໍເພິ່ງລຸດໄປ ເຂົາເພິ່ງເຖິງຄວາມພິນາດ ຍ້ອນຫຍ້າຄາເປັນຕົ້ນນັ້ນລຸດໄປ ແມ່ນສັນໃດ?

ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບກໍຄືກັນສັນນັ້ນ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ຮູບຂອງເຂົານັ້ນຍ່ອຍຍັບໄປ ເຂົາກໍເຖິງຄວາມພິນາດ ຍ້ອນຮູບນັ້ນຍ່ອຍຍັບໄປ

ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ ວິນຍານຂອງເຂົານັ້ນຍ່ອຍຍັບໄປ ເຂົາກໍເຖິງຄວາມພິນາດ ຍ້ອນວິນຍານນັ້ນຍ່ອຍຍັບໄປ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ພິກຂຸທັງຫຼາຍຂາບທູນວ່າ ບໍ່ທ່ຽງ ຂ້ານ້ອຍ

ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ฯลฯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯลฯ ຮູ້ແຈ້ງວ່າ ฯลฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ນະທີສູດທີ ໑ ຈົບ**

# ໘. ປຸບຜະສູດ

## ວ່າດ້ວຍອຸປະມາດ້ວຍດອກໄມ້

[໙໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ໃນບ່ອນນັ້ນແລ ฯลฯ ພິກຂຸທັງຫຼາຍ ເຮົາບໍ່ຂັດແຍ່ງກັບໂລກ ແຕ່ໂລກຂັດແຍ່ງກັບເຮົາ ຜູ້ກ່າວເປັນທຳບໍ່ຂັດແຍ່ງກັບໃຜ ໆ ໃນໂລກ ສິ່ງໃດທີ່ບັນດິດໃນໂລກສົມມຸດວ່າບໍ່ມີ ແມ່ນ ເຮົາກໍກ່າວສິ່ງນັ້ນວ່າ ບໍ່ມີ ສິ່ງໃດທີ່ບັນດິດໃນໂລກສົມມຸດວ່າມີ ແມ່ນເຮົາກໍກ່າວສິ່ງນັ້ນວ່າ ມີ

ກໍອັນໃດນໍ? ຊື່ວ່າສິ່ງທີ່ບັນດິດໃນໂລກສົມມຸດວ່າບໍ່ມີ ເຮົາກໍກ່າວວ່າ ບໍ່ມີ

ຄື ຮູບທີ່ທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທີ່ບັນດິດໃນໂລກສົມມຸດວ່າ ບໍ່ມີ ແມ່ນເຮົາກໍກ່າວຮູບນັ້ນວ່າ ບໍ່ມີ

ເວທະນາ ฯลฯ
ສັນຍາ ฯลฯ
ສັງຂານ ฯลฯ
ວິນຍານທີ່ທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທີ່ບັນດິດໃນໂລກສົມມຸດວ່າບໍ່ມີ ແມ່ນເຮົາກໍກ່າວວິນຍານນັ້ນວ່າ ບໍ່ມີ

ນີ້ແລ ຊື່ວ່າ ສິ່ງທີ່ບັນດິດໃນໂລກສົມມຸດວ່າ ບໍ່ມີ ແມ່ນເຮົາກໍກ່າວວ່າ ບໍ່ມີ

ອັນໃດນໍ? ຊື່ວ່າ ສິ່ງທີ່ບັນດິດໃນໂລກສົມມຸດວ່າມີ ເຮົາກໍກ່າວວ່າ ມີ

ຄື ຮູບທີ່ບໍ່ທ່ຽງ ເປັນທຸກ ຜັນແປ ທີ່ບັນດິດໃນໂລກສົມມຸດວ່າມີ ແມ່ນເຮົາກໍກ່າວຮູບນັ້ນວ່າ ມີ

ເວທະນາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານທີ່ບໍ່ທ່ຽງ ເປັນທຸກ ຜັນແປ ທີ່ບັນດິດໃນໂລກສົມມຸດວ່າມີ ແມ່ນເຮົາກໍກ່າວວິນຍານນັ້ນວ່າ ມີ

ນີ້ແລ ຊື່ວ່າ ສິ່ງທີ່ບັນດິດໃນໂລກສົມມຸດວ່າ ມີ ແມ່ນເຮົາກໍກ່າວວ່າ ມີ

ໂລກກະທຳ ມີຢູ່ໃນໂລກ ຕະຖາຄົດຕັດສະຮູ້ ຮູ້ແຈ້ງໂລກກະທຳນັ້ນແລ້ວ ຈຶ່ງບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ

ກໍອັນໃດນໍ? ຊື່ວ່າ ໂລກກະທຳໃນໂລກ ທີ່ຕະຖາຄົດຕັດສະຮູ້ ຮູ້ແຈ້ງແລ້ວ ຈຶ່ງບອກສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ

ຄື ຮູບຈັດເປັນໂລກກະທຳໃນໂລກ ທີ່ຕະຖາຄົດຕັດສະຮູ້ ຯລຯ ເຮັດໃຫ້ງ່າຍ

ບຸກຄົນໃດ? ເມື່ອຕະຖາຄົດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍຢູ່ແນວນີ້ ຍັງບໍ່ຮູ້ ບໍ່ເຫັນ ເຮົາຈະເຮັດຫຍັງກັບບຸກຄົນຜູ້ໂງ່ຈ້າ ເປັນປຸຖຸຊົນ ຄົນບອດ ບໍ່ມີດວງຕາ ບໍ່ຮູ້ ບໍ່ເຫັນນັ້ນໄດ້

ເວທະນາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານຈັດເປັນໂລກກະທຳໃນໂລກທີ່ຕະຖາຄົດຕັດສະຮູ້ ຮູ້ແຈ້ງແລ້ວ ຈຶ່ງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ

ບຸກຄົນໃດ ເມື່ອຕະຖາຄົດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍຢູ່ແນວນີ້ ຍັງບໍ່ຮູ້ ບໍ່ເຫັນ ເຮົາຈະເຮັດຫຍັງກັບບຸກຄົນຜູ້ໂງ່ຈ້າ ເປັນປຸຖຸຊົນ ຄົນບອດ ບໍ່ມີດວງຕາ ບໍ່ຮູ້ ບໍ່ເຫັນນັ້ນໄດ້

ພິກຂຸທັງຫຼາຍ ດອກບົວກໍດີ ດອກບົວຫຼວງກໍດີ ດອກບົວຂາວກໍດີ ເກີດໃນນ້ຳ ຈະເລີນໃນນ້ຳ ຜຸດພົ້ນນ້ຳແລ້ວຕັ້ງຢູ່ ແຕ່ບໍ່ຕິດນ້ຳ ແມ່ນສັນໃດ ຕະຖາຄົດກໍຄືກັນສັນນັ້ນ ເກີດໃນໂລກຈະເລີນໃນໂລກ ຄອບງຳໂລກຢູ່ ແຕ່ບໍ່ຕິດໂລກ

**ປຸບຜະສູດທີ ໘ ຈົບ**

# ៣. ເຜນະປິນທູປະມະສູດ

## ວ່າດ້ວຍອຸປະມາດ້ວຍກຸ່ມຟອງນ້ຳ

[໗໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຝັ່ງແມ່ນ້ຳຄົງຄາ ເຂດເມືອງອະຍຸດຊາ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ແມ່ນ້ຳຄົງຄານີ້ເພິ່ງພັດຟອງນ້ຳກຸ່ມໃຫຍ່ມາ ບຸຣຸດຜູ້ມີຕາດີກໍຈະເພິ່ງເຫັນ ເພ່ງ ພິຈາລະນາຟອງນ້ຳກຸ່ມໃຫຍ່ນັ້ນໂດຍແຍບຄາຍໄດ້ ເມື່ອເຂົາເຫັນ ເພ່ງ ພິຈາລະນາຟອງນ້ຳກຸ່ມໃຫຍ່ນັ້ນໂດຍແຍບຄາຍ ຟອງນ້ຳກໍຈະເພິ່ງຜາກົດເປັນຂອງວ່າງ ເປົ່າ ຫາສາລະບໍ່ໄດ້ເລີຍ ສາລະໃນຟອງນ້ຳຈະມີໄດ້ແນວໃດ ແມ່ນສັນໃດ ຮູບແນວໃດແນວໜຶ່ງກໍຄືກັນສັນນັ້ນ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ພິກຂຸເຫັນ ເພ່ງ ພິຈາລະນາຮູບນັ້ນໂດຍແຍບຄາຍ ເມື່ອທ່ານເຫັນ ເພ່ງ ພິຈາລະນາຮູບນັ້ນໂດຍແຍບຄາຍ ຮູບກໍຈະຜາກົດເປັນຂອງວ່າງ ເປົ່າ ຫາສາລະບໍ່ໄດ້ເລີຍ ສາລະໃນຮູບຈະມີໄດ້ແນວໃດ?

ເມື່ອຝົນເມັດໃຫຍ່ຕົກໃນສາຣະທະລະດູ ຟອງນ້ຳເກີດຂຶ້ນ ແລະດັບໄປເທິງຜິວນ້ຳ ບຸຣຸດຜູ້ມີຕາດີກໍເພິ່ງເຫັນ ເພ່ງ ພິຈາລະນາຟອງນ້ຳນັ້ນໂດຍແຍບຄາຍໄດ້ ເມື່ອເຂົາເຫັນ ເພ່ງ ພິຈາລະນາ ຟອງນ້ຳນັ້ນ ໂດຍແຍບຄາຍ ຟອງນ້ຳກໍຈະເພິ່ງຜາກົດເປັນຂອງວ່າງ ເປົ່າ ຫາສາລະບໍ່ໄດ້ເລີຍ ສາລະໃນຟອງນ້ຳນັ້ນ ຈະມີໄດ້ແນວໃດ ແມ່ນສັນໃດ ເວທະນາແນວໃດແນວໜຶ່ງກໍຄືກັນສັນນັ້ນ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ພິກຂຸເຫັນ ເພ່ງ ພິຈາລະນາເວທະນານັ້ນໂດຍແຍບຄາຍ ເມື່ອທ່ານເຫັນ ເພ່ງ ພິຈາລະນາເວທະນານັ້ນໂດຍແຍບຄາຍ ເວທະນາກໍຈະຜາກົດເປັນຂອງວ່າງ ເປົ່າ ຫາສາລະບໍ່ໄດ້ເລີຍ ສາລະໃນເວທະນາຈະມີໄດ້ແນວໃດ?

ເມື່ອເດືອນສຸດທ້າຍແຫ່ງລະດູຮ້ອນຍັງຢູ່ ພະຍັບແດດຣະຍິບຣະຍັບໃນເວລາທ່ຽງ ບຸຣຸດຜູ້ມີຕາດີກໍຈະເພິ່ງເຫັນ ເພ່ງ ພິຈາລະນາພະຍັບແດດນັ້ນໂດຍແຍບຄາຍໄດ້ ເມື່ອເຂົາເຫັນ ເພ່ງ ພິຈາລະນາພະຍັບແດດນັ້ນ ໂດຍແຍບຄາຍ ພະຍັບແດດກໍຈະຜາກົດເປັນຂອງວ່າງ ເປົ່າ ຯລຯ ສາລະໃນພະຍັບແດດຈະມີໄດ້ແນວໃດ ແມ່ນສັນໃດ ສັນຍາແນວໃດແນວໜຶ່ງກໍຄືກັນສັນນັ້ນ ຯລຯ

ບຸຣຸດ ຜູ້ຕ້ອງການແກ່ນໄມ້ທ່ຽວເສາະສະແຫວງຫາແກ່ນໄມ້ ຖືຂວານທີ່ຄົມເຂົ້າໄປສູ່ປ່າ ເຂົາເຫັນຕົ້ນກ້ວຍໃຫຍ່ ຊື່ ກຳລັງໃຫຍ່ ບໍ່ມີແກ່ນໃນປ່ານັ້ນຈຶ່ງຕັດເຫງົ້າ ຕັດປາຍ ແລ້ວປອກກາບອອກ ເຂົາປອກກາບອອກແລ້ວ ບໍ່ໄດ້ແມ່ນມອກໃນຕົ້ນກ້ວຍນັ້ນ ຈະໄດ້ແກ່ນແຕ່ບ່ອນໃດນໍ

ບຸຣຸດຜູ້ມີຕາດີກໍຈະເຫັນ ເພ່ງ ພິຈາລະນາຕົ້ນກ້ວຍນັ້ນໂດຍແຍບຄາຍໄດ້ ເມື່ອເຂົາເຫັນ ເພ່ງ ພິຈາລະນາຕົ້ນກ້ວຍນັ້ນໂດຍແຍບຄາຍ ຕົ້ນກ້ວຍກໍຈະເພິ່ງຜາກົດເປັນຂອງວ່າງ ເປົ່າ ຫາແກ່ນບໍ່ໄດ້ເລີຍ ແກ່ນໃນຕົ້ນກ້ວຍຈະມີໄດ້ແນວໃດ ແມ່ນສັນໃດ ສັງຂານເຫຼົ່າໃດເຫຼົ່າໜຶ່ງກໍຄືກັນສັນນັ້ນ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ພິກຂຸເຫັນ ເພ່ງ ພິຈາລະນາສັງຂານນັ້ນໂດຍແຍບຄາຍ ເມື່ອທ່ານເຫັນ ເພ່ງ ພິຈາລະນາສັງຂານນັ້ນໂດຍແຍບຄາຍ ສັງຂານກໍຈະຜາກົດເປັນຂອງວ່າງ ເປົ່າ ຫາສາລະບໍ່ໄດ້ເລີຍ ສາລະໃນສັງຂານທັງຫຼາຍຈະມີໄດ້ແນວໃດ

ນັກມາຍາກົນ ຫຼື ລູກມືນັກມາຍາກົນສະແດງມາຍາກົນຢູ່ທາງໃຫຍ່ ໔ ແຍກ ບຸຣຸດ ຜູ້ມີຕາດີກໍຈະເພິ່ງເຫັນ ເພ່ງ ພິຈາລະນາມາຍາກົນນັ້ນໂດຍແຍບຄາຍໄດ້ ເມື່ອເຂົາເຫັນ ເພ່ງ ພິຈາລະນາມາຍາກົນນັ້ນໂດຍແຍບຄາຍ ມາຍາກົນກໍຈະເພິ່ງຜາກົດເປັນຂອງວ່າງ ເປົ່າ ຫາສາລະບໍ່ໄດ້ເລີຍ ສາລະໃນມາຍາກົນຈະມີໄດ້ແນວໃດ ແມ່ນສັນໃດ ວິນຍານແນວໃດແນວໜຶ່ງກໍຄືກັນສັນນັ້ນ ທັງທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນ ຯລຯ ໄກຫຼືໃກ້ກໍຕາມ ພິກຂຸເຫັນ ເພ່ງ ພິຈາລະນາວິນຍານນັ້ນໂດຍແຍບຄາຍ ເມື່ອທ່ານເຫັນ ເພ່ງ ພິຈາລະນາວິນຍານນັ້ນໂດຍແຍບຄາຍ ວິນຍານກໍຈະຜາກົດເປັນຂອງວ່າງ ເປົ່າ ຫາສາລະບໍ່ໄດ້ເລີຍ ສາລະໃນວິນຍານຈະມີໄດ້ແນວໃດ?

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຯລຯ ແມ່ນໃນສັນຍາ ຯລຯ ແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກໍາໜັດ ຍ້ອນຄາຍກໍາໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະອາທິດ
ຊົງສະແດງແລ້ວວ່າ ຮູບອຸປະມາດ້ວຍກຸ່ມຟອງນໍ້າ
ເວທະນາອຸປະມາດ້ວຍຟອງນໍ້າ ສັນຍາອຸປະມາດ້ວຍພະຍັບແດດ
ສັງຂານອຸປະມາດ້ວຍຕົ້ນກ້ວຍ ແລະວິນຍານອຸປະມາດ້ວຍມາຍາກົນ

ພິກຂຸເພ່ງພິຈາລະນາເຫັນຂັນ ໕ ນັ້ນ ໂດຍແຍບຄາຍດ້ວຍປະການໃດ ໆ
ຂັນ ໕ ນັ້ນ ກໍຜາກົດເປັນຂອງວ່າງເປົ່າດ້ວຍປະການນັ້ນ ໆ
ການລະທໍາ ໓ ປະການເຊິ່ງພຣະພຸດທະເຈົ້າ
ຜູ້ຊົງມີປັນຍາຄືແຜ່ນດິນ ຊົງຜາຣົບກາຍນີ້ ສະແດງໄວ້ແລ້ວ

ທ່ານທັງຫຼາຍ ຈົ່ງເບິ່ງຮູບທີ່ບຸກຄົນຖິ້ມແລ້ວ
ເມື່ອໃດ ອາຍຸ ອາຍອຸ່ນ ແລະວິນຍານລະກາຍນີ້
ເມື່ອນັ້ນ ກາຍນີ້ກໍຖືກປະຖິ້ມ ນອນເປັນອາຫານຂອງສັດອື່ນ
ປາສະຈາກເຈຕະນາ ຄວາມສືບຕໍ່ເປັນແນວນີ້
ນີ້ເປັນມາຍາກົນສຳລັບຫຼອກລວງຄົນໂງ່
ຂັນ ໕ ປຽບຄືເພດຊະຄາດ
ເຮົາບອກແລ້ວ ສາລະໃນຂັນ ໕ ນີ້ບໍ່ມີ

ພິກຂຸຜູ້ຜາຣົບຄວາມພຽນ ມີສະຕິ ມີສຳປະຊັນຍະ
ເພິ່ງພິຈາລະນາຂັນທັງຫຼາຍແນວນີ້ທັງກາງເວັນແລະກາງຄືນ
ພິກຂຸເມື່ອປາຖະໜາບົດອັນບໍ່ຈຸຕິ
ເພິ່ງລະສັງໂຍດທັງປວງ ເຮັດບ່ອນເພິ່ງແກ່ຕົນ
ປະພຶດຄືບຸກຄົນຖືກໄຟໄໝ້ຫົວສັນນັ້ນ

**ເຜນະປິນທູປະມະສູດທີ ໓ ຈົບ**

# ໔. ໂຄມະຍະປິນທະສູດ

## ວ່າດ້ວຍອຸປະມາດ້ວຍກ້ອນມູນງົວ

[໙໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ฯลฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ

ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຮູບແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ມີຢູ່ບໍ?

ເວທະນາ ແນວໃດແນວໜຶ່ງ ฯลฯ
ສັນຍາ ແນວໃດແນວໜຶ່ງ ฯลฯ
ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ฯลฯ
ວິນຍານ ແນວໃດແນວໜຶ່ງ ฯลฯ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຮູບແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີເລີຍ

ເວທະນາ ແນວໃດແນວໜຶ່ງ ຯລຯ

ສັນຍາ ແນວໃດແນວໜຶ່ງ ຯລຯ

ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານ ແນວໃດແນວໜຶ່ງ ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຈັບກ້ອນມູນງົວກ້ອນນ້ອຍ ໆ ຂຶ້ນມາແລ້ວຕັດວ່າ ພິກຂຸ ການໄດ້ອັດຕະພາບແມ່ນປະມານທໍ່ນີ້ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປທ່ຽງສະເໝີຢູ່ແນວນັ້ນ ບໍ່ມີ ຖ້າແມ່ນການໄດ້ອັດຕະພາບປະມານທໍ່ນີ້ ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປແລ້ວແລ້ວ ການຢູ່ປະພຶດພົມມະຈັນ ເພື່ອຄວາມໝົດທຸກໂດຍຖືກຕ້ອງນີ້ ກໍຈຶ່ງຈະບໍ່ຜາກົດ ແຕ່ຍ້ອນການໄດ້ອັດຕະພາບແມ່ນປະມານທໍ່ນີ້ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປບໍ່ມີ ສັນນັ້ນ ການຢູ່ປະພຶດພົມມະຈັນ ເພື່ອຄວາມໝົດທຸກໂດຍຖືກຕ້ອງຈຶ່ງຜາກົດ

ພິກຂຸ ເລື້ອງເຄີຍມີມາແລ້ວ ເຮົາໄດ້ເປັນພຣະຣາຊາມະຫາກະສັດຜູ້ໄດ້ຮັບມຸດທາພິເສກມີເມືອງ ໘໔,໐໐໐ ເມືອງ ເຊິ່ງມີກຸສາວະດີຣາດຊະທານີເປັນເມືອງຫຼວງ

ມີຜາສາດ ໘໔,໐໐໐ ຫຼັງ ເຊິ່ງມີທຳມະຜາສາດເປັນຜາສາດຫຼວງ

ມີເຮືອນຍອດ ໘໔,໐໐໐ ຫຼັງ ເຊິ່ງມີເຮືອນຍອດມະຫາພະຍູຫະເປັນເຮືອນຍອດຫຼວງ

ມີບັນລັງ ໘໔,໐໐໐ ບັນລັງ ເຮັດດ້ວຍງາ ເຮັດດ້ວຍແກ່ນຈັນແດງ ປະດັບດ້ວຍຄຳແລະເງິນ ປູລາດດ້ວຍຜ້າໂກເຊົາ ປູລາດດ້ວຍຜ້າກຳພົນຂາວ ປູລາດດ້ວຍເຄື່ອງປູລາດເຮັດດ້ວຍຂົນແກະ ມີເຄື່ອງປູລາດທີ່ດີເຮັດດ້ວຍໜັງຊະມົດ ມີເພດານສີແດງ ມີໝອນສີແດງທັງ ໒ ຂ້າງ

ມີຊ້າງຕົ້ນ ໘໔,໐໐໐ ຊ້າງ ເຊິ່ງມີເຄື່ອງປະດັບເຮັດດ້ວຍຄຳ ມີທຸງເຮັດດ້ວຍຄຳ ຄຸມດ້ວຍຕາໜ່າງຄຳ ມີພະຍາຊ້າງອຸໂປສົດເປັນຫົວໜ້າ

ມີມ້າຕົ້ນ ໘໔,໐໐໐ ມ້າ ເຊິ່ງມີເຄື່ອງປະດັບເຮັດດ້ວຍຄຳ ຄຸມດ້ວຍຕາໜ່າງຄຳ ມີມ້າວະລາຫະກະອັດສະວະຣາດເປັນຫົວໜ້າ

ມີລົດຊົງ ໘໔,໐໐໐ ຄັນ ມີເຄື່ອງປະດັບເຮັດດ້ວຍຄຳ ມີທຸງເຮັດດ້ວຍຄຳ ຄຸມດ້ວຍຕາໜ່າງຄຳ ມີເວຊະຍັນຕະຣາດຊະລົດເປັນປະທານ

ມີແກ້ວ ໘໔,໐໐໐ ດວງ ມີແກ້ວມະນີເປັນປະທານ

ມີພຣະສະໜົມ ໘໔,໐໐໐ ນາງ ມີພຣະນາງສຸພັນທາເທວີເປັນຫົວໜ້າ

ມີກະສັດ ໘໔,໐໐໐ ພຣະອົງຕາມສະເດັດ ມີຂຸນພົນແກ້ວເປັນປະມຸກ

ມີແມ່ງົວນົມ ໘໔,໐໐໐ ໂຕ ມັດດ້ວຍເຊືອກປ່ານ ແຂວນກະດິ່ງສຳຣິດ

ມີຜ້າ ໘໔,໐໐໐ ໂກດ ຄືຜ້າເປືອກໄມ້ເນື້ອລະອຽດ ຜ້າໄໝເນື້ອລະອຽດ ຜ້າຂົນສັດເນື້ອລະອຽດ ຜ້າຝ້າຍເນື້ອລະອຽດ

ມີພາຊະນະຄຳ ໗໔,໐໐໐ ຊຸດ ເຊິ່ງຊົນທັງຫຼາຍໃສ່ອາຫານນຳມາທັງໃນເວລາແລງແລະໃນເວລາເຊົ້າ

ພິກຂຸ ກໍບັນດາເມືອງ ໗໔,໐໐໐ ເມືອງນັ້ນ ເມືອງທີ່ເຮົາຄອງໃນສະໄໝນັ້ນມີເມືອງດຽວທີ່ນັ້ນ ຄື ກຸສາວະດີຣາດຊະທານີ

ບັນດາຜາສາດ ໗໔,໐໐໐ ຫຼັງນັ້ນ ຜາສາດທີ່ເຮົາຄອງໃນສະໄໝນັ້ນມີຫຼັງດຽວທີ່ນັ້ນ ຄືທຳມະຜາສາດ

ບັນດາເຮືອນຍອດ ໗໔,໐໐໐ ຫຼັງນັ້ນ ເຮືອນຍອດທີ່ເຮົາຄອງໃນສະໄໝນັ້ນມີຫຼັງ ດຽວທີ່ນັ້ນ ຄື ເຮືອນຍອດມະຫາພະຍູຫະ

ບັນດາບັນລັງ ໗໔,໐໐໐ ບັນລັງນັ້ນ ບັນລັງທີ່ເຮົານັ່ງໃນສະໄໝນັ້ນມີບັນລັງດຽວທີ່ນັ້ນ ຄື ບັນລັງທີ່ເຮັດດ້ວຍງາ ເຮັດດ້ວຍແກ່ນຈັນແດງ ເຮັດດ້ວຍຄຳ ເຮັດດ້ວຍເງິນ

ບັນດາຊ້າງຕົ້ນ ໗໔,໐໐໐ ຊ້າງນັ້ນ ຊ້າງທີ່ເຮົາຊີ່ງໃນສະໄໝນັ້ນມີຊ້າງດຽວທີ່ນັ້ນ ຄື ພະຍາຊ້າງອຸໂປສົດ

ບັນດາມ້າຕົ້ນ ໗໔,໐໐໐ ມ້ານັ້ນ ມ້າທີ່ເຮົາຊີ່ງໃນສະໄໝນັ້ນມີມ້າດຽວທີ່ນັ້ນ ຄືມ້າວະລາຫະກະອັດສະວະຣາດ

ບັນດາຣາດຊະລົດ ໗໔,໐໐໐ ຄັນນັ້ນ ຣາດຊະລົດທີ່ເຮົາຊີ່ງໃນສະໄໝນັ້ນ ມີຄັນດຽວທີ່ນັ້ນ ຄື ເວຊະຍັນຕະຣາດຊະລົດ

ບັນດາພຣະສະໜົມ ໗໔,໐໐໐ ນາງນັ້ນ ພຣະສະໜົມທີ່ເຮົາຍ້ອງຍໍໃນສະໄໝນັ້ນມີນາງດຽວທີ່ນັ້ນ ຄືນາງຂັດຕິຍານີຫຼືນາງເວລາມິກາ

ບັນດາຜ້າ ໗໔,໐໐໐ ໂກດນັ້ນ ຜ້າທີ່ເຮົາຊີ່ງໃນສະໄໝນັ້ນມີຄູ່ດຽວທີ່ນັ້ນ ຄື ຜ້າເປືອກໄມ້ເນື້ອລະອຽດ ຜ້າໄໝເນື້ອລະອຽດ ຜ້າຂົນສັດເນື້ອລະອຽດ ຫຼື ຜ້າຝ້າຍເນື້ອລະອຽດ

ບັນດາພາຊະນະຄຳ ໗໔,໐໐໐ ຊຸດນັ້ນ ພາຊະນະຄຳເຊິ່ງໃສ່ເຂົ້າສຸກທີ່ຫຸງຈາກເຂົ້າສານ ໑ ໂອເປັນຢ່າງຫຼາຍ ແລະ ແກງກັບອັນພໍເໝາະແກ່ເຂົ້ານັ້ນ ທີ່ເຮົາບໍຣິໂພກມີຊຸດດຽວທີ່ນັ້ນ

ພິກຂຸ ສັງຂານທັງປວງນັ້ນ ລ່ວງໄປ ດັບໄປ ຜັນແປໄປແລ້ວ ດ້ວຍປະການດັ່ງນີ້ ສັງຂານທັງຫຼາຍ ບໍ່ທ່ຽງແນວນີ້ ສັງຂານທັງຫຼາຍບໍ່ໝັ້ນຍືນແນວນີ້ ສັງຂານທັງຫຼາຍບໍ່ໜ້າເບົາໃຈແນວນີ້ ກໍສັງຂານທັງປວງມີລັກສະນະທີ່ບໍ່ທ່ຽງແນວນີ້ ຄວນຢ່າງຍິ່ງທີ່ຈະເບື່ອໜ່າຍ ຄາຍກຳໜັດພົ້ນໄປຈາກສັງຂານທັງປວງ

**ໂຄມະຍະປິນທະສູດທີ ໘ ຈົບ**

# ៨. ນະຂະສິຂາສູດ

## ວ່າດ້ວຍອຸປະມາດ້ວຍຝຸ່ນຢູ່ປາຍເລັບ

[໙໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງ ຜູ້ຈະເລີນ ຮູບແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ມີຢູ່ບໍ?

ເວທະນາ ແນວໃດແນວໜຶ່ງ ฯລฯ
ສັນຍາ ແນວໃດແນວໜຶ່ງ ฯລฯ
ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ฯລฯ
ວິນຍານ ແນວໃດແນວໜຶ່ງ ฯລฯ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຮູບແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີເລີຍ

ເວທະນາ ແນວໃດແນວໜຶ່ງ ฯລฯ
ສັນຍາ ແນວໃດແນວໜຶ່ງ ฯລฯ
ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ฯລฯ
ວິນຍານ ແນວໃດແນວໜຶ່ງ ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີເລີຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຕັກຝຸ່ນຂຶ້ນມາໜອຍໜຶ່ງດ້ວຍປາຍພຣະນະຂາແລ້ວຕັດກັບພິກຂຸນັ້ນວ່າ ພິກຂຸ ຮູບແມ່ນປະມານທໍ່ນີ້ ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີ ຖ້າຮູບແມ່ນປະມານທໍ່ນີ້ ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປແລ້ວການຢູ່ປະພຶດພົມມະຈັນເພື່ອຄວາມໝົດທຸກໂດຍຖືກຕ້ອງນີ້ ກໍຈຶ່ງຈະບໍ່ຜາກົດ ແຕ່ຍ້ອນຮູບແມ່ນປະມານທໍ່ນີ້ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ບໍ່ມີ ສັນນັ້ນ ການຢູ່ປະພຶດພົມມະຈັນເພື່ອຄວາມໝົດທຸກໂດຍຖືກຕ້ອງຈຶ່ງຜາກົດ

ເວທະນາ ແມ່ນປະມານທໍ່ນີ້ ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີ ຖ້າເວທະນາແມ່ນປະມານທໍ່ນີ້ ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປແລ້ວ ການຢູ່ປະພຶດພົມມະຈັນເພື່ອຄວາມໝົດທຸກໂດຍຖືກຕ້ອງນີ້ ກໍຈຶ່ງຈະບໍ່ຜາກົດ ແຕ່ຍ້ອນເວທະນາແມ່ນ

ປະມານທໍ່ນີ້ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ບໍ່ມີ ສະນັ້ນ ການຢູ່ປະພຶດພົມມະຈັນ ເພື່ອຄວາມໝົດທຸກໂດຍຖືກຕ້ອງຈຶ່ງຜາກົດມີ

ສັນຍາແມ່ນປະມານທໍ່ນີ້ ຯລຯ

ສັງຂານ ແມ່ນປະມານທໍ່ນີ້ ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີ ຖ້າສັງຂານແມ່ນປະມານທໍ່ນີ້ ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປແລ້ວ ການຢູ່ປະພຶດພົມມະຈັນເພື່ອຄວາມໝົດທຸກໂດຍຖືກຕ້ອງນີ້ ກໍຈຶ່ງຈະບໍ່ຜາກົດ ແຕ່ຍ້ອນສັງຂານແມ່ນປະມານທໍ່ນີ້ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ບໍ່ມີ ສັນນັ້ນ ການຢູ່ປະພຶດພົມມະຈັນເພື່ອຄວາມໝົດທຸກໂດຍຖືກຕ້ອງຈຶ່ງຜາກົດ

ວິນຍານ ແມ່ນປະມານທໍ່ນີ້ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີ ຖ້າວິນຍານແມ່ນປະມານທໍ່ນີ້ ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປແລ້ວ ການຢູ່ປະພຶດພົມມະຈັນເພື່ອຄວາມໝົດທຸກໂດຍຖືກຕ້ອງນີ້ ກໍຈຶ່ງຈະບໍ່ຜາກົດ ແຕ່ຍ້ອນວິນຍານແມ່ນປະມານທໍ່ນີ້ທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ບໍ່ມີ ສັນນັ້ນ ການຢູ່ປະພຶດພົມມະຈັນ ເພື່ອຄວາມໝົດທຸກໂດຍຖືກຕ້ອງຈຶ່ງຜາກົດ

ພິກຂຸ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຍ້ອນເຫດນັ້ນແລ ຯລຯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ນະຂະສິຂາສູດທີ ໕ ຈົບ**

# ៦. ສຸດທິກະສູດ

## ວ່າດ້ວຍຂັນລ້ອນ ໆ

[໙໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະ

ອີງຜູ້ຈະເລີນ ຮູບແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ມີຢູ່ບໍ?

ເວທະນາ ແນວໃດແນວໜຶ່ງ ຯລຯ

ສັນຍາ ແນວໃດແນວໜຶ່ງ ຯລຯ

ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ມີຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ຮູບແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີເລີຍ

ເວທະນາ ແນວໃດແນວໜຶ່ງ ຯລຯ

ສັນຍາ ແນວໃດແນວໜຶ່ງ ຯລຯ

ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງທີ່ຈັກທ່ຽງແທ້ ໝັ້ນຍືນ ຄົງທົນ ບໍ່ຜັນແປ ທ່ຽງສະເໝີຢູ່ແນວນັ້ນ ບໍ່ມີເລີຍ

**ສຸດທິກະສູດທີ ໖ ຈົບ**

# ໗. ຄັດທູລະພັດທະສູດ

## ວ່າດ້ວຍອຸປະມາດ້ວຍໝາຖືກລ່າມ

[໙໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສົງສານ (ການວຽນວ່າຍຕາຍເກີດ) ນີ້ມີເບື້ອງຕົ້ນເບື້ອງປາຍທີ່ໃຜ ໆ ຮູ້ບໍ່ໄດ້ ເບື້ອງຕົ້ນເບື້ອງປາຍບໍ່ປາກົດແກ່ສັດທັງຫຼາຍ ຜູ້ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງປະກອບໄວ້ ທ່ອງທ່ຽວໄປ

ມະຫາສະມຸດຍັງມີເວລາເຫືອດແຫ້ງໄປ ມີຢູ່ບໍ່ໄດ້ ແຕ່ເຮົາກໍບໍ່ໄດ້ກ່າວວ່າ ສັດທັງຫຼາຍຜູ້ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງປະກອບໄວ້ ທ່ອງທ່ຽວໄປຢູ່ ຈະເຮັດບ່ອນສຸດແຫ່ງທຸກໄດ້

ພູຫຼວງສິເນຣຸຍັງມີເວລາຖືກໄຟເຜົາພິນາດໄປ ມີຢູ່ບໍ່ໄດ້ ແຕ່ເຮົາກໍບໍ່ໄດ້ກ່າວວ່າ ສັດທັງຫຼາຍຜູ້ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງປະກອບໄວ້ ທ່ອງທ່ຽວໄປຢູ່ ຈະເຮັດບ່ອນສຸດແຫ່ງທຸກໄດ້

ແຜ່ນດິນໃຫຍ່ຍັງມີເວລາຖືກໄຟເຜົາພິນາດໄປ ມີຢູ່ບໍ່ໄດ້ ແຕ່ເຮົາກໍບໍ່ໄດ້ກ່າວວ່າ ສັດທັງຫຼາຍຜູ້ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງປະກອບໄວ້ ທ່ອງທ່ຽວໄປຢູ່ ຈະເຮັດບ່ອນສຸດແຫ່ງທຸກໄດ້

ໝາທີ່ເຂົາມັດໄວ້ດ້ວຍເຊືອກ ລ່າມໄວ້ທີ່ຫຼັກຫຼືເສົາທີ່ແຂງແຮງ ແລ່ນວົນວຽນຫຼັກຫຼືເສົານັ້ນເອງແມ່ນສັນໃດ ປຸຖຸຊົນຜູ້ບໍ່ໄດ້ສະດັບກໍຄືກັນສັນນັ້ນ ບໍ່ໄດ້ເຫັນພຣະອະຣິຍະ ຯລຯ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ຯລຯ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ຯລຯ ສັນຍາ ຯລຯ ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ ປຸຖຸຊົນນັ້ນແລ່ນວົນວຽນຢູ່ກັບຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ແລ່ນວົນວຽນຢູ່ກັບວິນຍານ ເມື່ອເຂົາແລ່ນວົນວຽນຢູ່ກັບຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ເມື່ອແລ່ນວົນວຽນຢູ່ກັບວິນຍານ ເຮົາກ່າວວ່າ ບໍ່ພົ້ນຈາກຮູບ ບໍ່ພົ້ນຈາກເວທະນາ ບໍ່ພົ້ນຈາກສັນຍາ ບໍ່ພົ້ນຈາກສັງຂານ ບໍ່ພົ້ນຈາກວິນຍານ ບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຊື່ວ່າ ບໍ່ພົ້ນຈາກທຸກ

ພິກຂຸທັງຫຼາຍ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ຯລຯ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ຯລຯ ບໍ່ພິຈາລະນາເຫັນເວທະນາ ຯລຯ ບໍ່ພິຈາລະນາເຫັນສັນຍາ ຯລຯ ບໍ່ພິຈາລະນາເຫັນສັງຂານ ຯລຯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ ອະຣິຍະສາວົກ ນັ້ນບໍ່ແລ່ນວົນວຽນຢູ່ກັບຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ບໍ່ແລ່ນວົນວຽນ ຢູ່ກັບວິນຍານ ເມື່ອທ່ານບໍ່ແລ່ນວົນວຽນຢູ່ກັບຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ບໍ່ແລ່ນວົນວຽນຢູ່ກັບວິນຍານ ຍ່ອມພົ້ນຈາກຮູບ ຍ່ອມພົ້ນຈາກເວທະນາ ຍ່ອມພົ້ນຈາກສັນຍາ ຍ່ອມພົ້ນຈາກສັງຂານ ຍ່ອມພົ້ນຈາກວິນຍານ ເຮົາກ່າວວ່າ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຍ່ອມພົ້ນຈາກທຸກ

**ຄັດທູລະພັດທະສູດທີ ໗ ຈົບ**

# ໗. ທຸຕິຍະຄັດທູລະພັດທະສູດ

## ວ່າດ້ວຍອຸປະມາດ້ວຍໝາຖືກລ່າມ ສູດທີ ໘

[໑໐໐] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສົງສານນີ້ມີເບື້ອງຕົ້ນເບື້ອງປາຍທີ່ໃຜ ໆ ຮູ້ບໍ່ໄດ້ ເບື້ອງຕົ້ນເບື້ອງປາຍບໍ່ປາກົດແກ່ສັດທັງຫຼາຍຜູ້ມີອະວິດຊາເປັນເຄື່ອງອັດກັ້ນ ມີຕັນຫາເປັນເຄື່ອງປະກອບໄວ້ ທ່ອງທ່ຽວໄປ

ໝາທີ່ເຂົາມັດໄວ້ດ້ວຍເຊືອກ ມັດຕິດໄວ້ກັບຫຼັກຫຼືເສົາທີ່ແຂງແຮງ ຖ້າແມ່ນໝານັ້ນຍ່າງກໍຍ່າງໃກ້ຫຼັກຫຼືເສົານັ້ນເອງ ຖ້າແມ່ນໝານັ້ນຢືນ ກໍຢືນໃກ້ຫຼັກຫຼືເສົານັ້ນເອງ ຖ້າແມ່ນໝານັ້ນໝອບກໍໝອບໃກ້ຫຼັກຫຼືເສົານັ້ນເອງ ຖ້າແມ່ນໝານັ້ນນອນ ກໍນອນໃກ້ຫຼັກຫຼືເສົານັ້ນເອງ ແມ່ນສັນໃດ ປຸຖຸຊົນຜູ້ບໍ່ໄດ້ສະດັບກໍຄືກັນສັນນັ້ນ ພິຈາລະນາເຫັນຮູບວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ປຸຖຸຊົນນັ້ນ ຖ້າແມ່ນເຂົາຍ່າງກໍຍ່າງໃກ້ອຸປາທານຂັນ ໕ ປະການນີ້ເອງ ຖ້າແມ່ນເຂົາຢືນກໍຢືນໃກ້ອຸປາທານຂັນ ໕ ປະການນີ້ເອງ ຖ້າແມ່ນເຂົານັ່ງກໍນັ່ງໃກ້ອຸປາທານຂັນ ໕ ປະການນີ້ເອງ ຖ້າແມ່ນເຂົານອນກໍນອນໃກ້ອຸປາທານຂັນ ໕ ປະການນີ້ເອງ

### ຄວາມເສົ້າໝອງແລະຄວາມຜ່ອງແຜ້ວແຫ່ງຈິດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ທ່ານທັງຫຼາຍຄວນພິຈາລະນາຈິດຂອງຕົນເນືອງ ໆ ວ່າ ຈິດນີ້ເສົ້າໝອງແລ້ວດ້ວຍຣາຄະ ໂທສະ ໂມຫະ ເປັນເວລາດົນ ສັດທັງຫຼາຍເສົ້າໝອງຍ້ອນຈິດເສົ້າໝອງ ສັດທັງຫຼາຍບໍລິສຸດຍ້ອນຈິດຜ່ອງແຜ້ວ ພາບຈິຕຕະກັມທີ່ເຂົາຂຽນໄວ້ ທ່ານທັງຫຼາຍເຫັນແລ້ວຫຼື

ພິກຂຸທັງຫຼາຍ ຂາບທູນວ່າ ເຫັນແລ້ວ ຂ້ານ້ອຍ

ພິກຂຸທັງຫຼາຍ ແມ່ນພາບຈິຕຕະກັມທີ່ເຂົາຂຽນໄວ້ນັ້ນ ຈິດຕະກອນກໍຄິດດ້ວຍຈິດນັ້ນເອງ ຈິດນັ້ນເອງວິຈິດກວ່າພາບຈິຕຕະກັມທີ່ເຂົາຂຽນໄວ້ນັ້ນ ຍ້ອນເຫດນັ້ນແລ ທ່ານທັງຫຼາຍຄວນພິຈາລະນາຈິດຂອງຕົນເນືອງ ໆ ວ່າ ຈິດນີ້ເສົ້າໝອງແລ້ວດ້ວຍຣາຄະ ໂທສະ ໂມຫະ ເປັນເວລາດົນ ສັດທັງຫຼາຍເສົ້າໝອງຍ້ອນຈິດເສົ້າໝອງ ສັດທັງຫຼາຍບໍລິສຸດຍ້ອນຈິດຜ່ອງແຜ້ວ

ເຮົາບໍ່ພິຈາລະນາເຫັນສັດອື່ນແມ່ນພຽງໝູ່ດຽວ ເຊິ່ງວິຈິດຄືແນວສັດເດຍຣັດສານນີ້ເລີຍ ສັດເດຍຣັດສານແມ່ນເຫຼົ່ານັ້ນ ຈິດຕະກອນກໍຄິດດ້ວຍຈິດນັ້ນເອງ ຈິດນັ້ນເອງວິຈິດກວ່າ

ສັດເດຍຣັດສານ ແມ່ນເຫຼົ່ານັ້ນ ຍ້ອນເຫດນັ້ນ ທ່ານທັງຫຼາຍ ຄວນພິຈາລະນາຈິດຂອງຕົນເນືອງ ໆ ວ່າ ຈິດນີ້ເສົ້າໝອງແລ້ວດ້ວຍຣາຄະ ໂທສະ ໂມຫະ ເປັນເວລາດົນນານ ສັດທັງຫຼາຍ ເສົ້າໝອງຍ້ອນຈິດເສົ້າໝອງ ສັດທັງຫຼາຍບໍລິສຸດຍ້ອນຈິດຜ່ອງແຜ້ວ

ພິກຂຸທັງຫຼາຍ ຊ່າງຍ້ອມຫຼືຈິດຕະກອນ ເມື່ອມີເຄື່ອງຍ້ອມກໍດີ ຄັ່ງກໍດີ ຂີ້ມີ້ນກໍດີ ສີຂຽວກໍດີ ສີແດງກໍດີ ເພິ່ງຂຽນຮູບສະຕີ ຫຼື ຮູບບຸຣຸດມີອະໄວຍະວະນ້ອຍໃຫຍ່ຄົບທຸກສ່ວນລົງເທິງແຜ່ນແປ້ນ ຝາ ຫຼື ແຜ່ນຜ້າທີ່ກ້ຽງເກົາ ແມ່ນສັນໃດ ປຸຖຸຊົນຜູ້ບໍ່ໄດ້ສະດັບກໍຄືກັນສັນນັ້ນ ເມື່ອຈະໃຫ້ເກີດ ກໍໃຫ້ຮູບນັ້ນເອງເກີດ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ເມື່ອຈະໃຫ້ເກີດກໍໃຫ້ວິນຍານນັ້ນເອງເກີດ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ฯລฯ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸຕິຍະຄັດທູລະພັດທະສູດທີ ໗ ຈົບ**

# ໘. ວາສິຊະຕະສູດ

## ວ່າດ້ວຍອຸປະມາດ້ວຍດ້າມມີດ

[໑໐໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາກ່າວຄວາມໝົດໄປແຫ່ງອາສະວະຂອງບຸກຄົນຜູ້ຮູ້ຢູ່ ເຫັນຢູ່ ບໍ່ໄດ້ກ່າວຄວາມໝົດໄປແຫ່ງອາສະວະຂອງບຸກຄົນຜູ້ບໍ່ຮູ້ ບໍ່ເຫັນ

ເມື່ອບຸກຄົນຮູ້ ເຫັນແນວໃດ ຄວາມໝົດໄປແຫ່ງອາສະວະຈຶ່ງມີ

ຄື ເມື່ອບຸກຄົນຮູ້ ເຫັນຢູ່ວ່າ ຮູບເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງຮູບເປັນດັ່ງນີ້ ຄວາມດັບ

ແຫ່ງຮູບເປັນດັ່ງນີ້ ເວທະນາເປັນດັ່ງນີ້ ຯລຯ ສັນຍາເປັນດັ່ງນີ້ ຯລຯ ສັງຂານເປັນດັ່ງນີ້ ຯລຯ ວິນຍານເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນດັ່ງນີ້ ຄວາມດັບແຫ່ງວິນຍານເປັນດັ່ງນີ້

ເມື່ອບຸກຄົນຮູ້ ເຫັນແນວນີ້ ຄວາມໝົດໄປແຫ່ງອາສະວະຈຶ່ງມີ

ພິກຂຸທັງຫຼາຍ ເມື່ອພິກຂຸບໍ່ປະກອບພາວະນາຢູ່ເນືອງ ໆ ເຖິງຈະມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຈິດຂອງເຮົາຈຶ່ງຈະລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ກໍຈິງ ເຖິງແນວນັ້ນ ຈິດຂອງທ່ານກໍບໍ່ລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນໄດ້ເລີຍ ຂໍ້ນັ້ນ ຍ້ອນເຫດໃດ ຂໍ້ນັ້ນ ເພິ່ງກ່າວໄດ້ວ່າ ຍ້ອນທ່ານບໍ່ໄດ້ຈະເລີນ

ຍ້ອນທ່ານບໍ່ໄດ້ຈະເລີນອັນໃດ?

ຄື ຍ້ອນທ່ານບໍ່ໄດ້ຈະເລີນສະຕິປັດຖານ ໔ ປະການ ບໍ່ໄດ້ຈະເລີນສຳມັບປະທານ ໔ ປະການ ບໍ່ໄດ້ຈະເລີນອິດທິບາດ ໔ ປະການ ບໍ່ໄດ້ຈະເລີນອິນຊີ ໕ ປະການ ບໍ່ໄດ້ຈະເລີນພະລະ ໕ ປະການ ບໍ່ໄດ້ຈະເລີນໂພດຊົງ ໗ ປະການ ບໍ່ໄດ້ຈະເລີນອະຣິຍະມັກມີອົງ ໘

ໄຂ່ໄກ່ ໘ ໜ່ວຍ ໑໐ ໜ່ວຍ ຫຼື ໑໒ ໜ່ວຍ ໄຂ່ເຫຼົ່ານັ້ນ ໄກ່ແມ່ບໍ່ເຕັງ ບໍ່ໝູບ ບໍ່ຟັກໃຫ້ດີ ໄກ່ແມ່ນັ້ນເຖິງຈະມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ? ລູກຂອງເຮົາຈຶ່ງຈະທຳລາຍເປືອກໄຂ່ດ້ວຍປາຍເລັບຕີນ ຫຼື ດ້ວຍສົບແຫຼມອອກມາໂດຍຄວາມປອດໄພກໍຈິງ ເຖິງແນວນັ້ນ ໄກ່ນ້ອຍເຫຼົ່ານັ້ນ ກໍບໍ່ສາມາດທຳລາຍເປືອກໄຂ່ດ້ວຍປາຍເລັບຕີນ ຫຼື ດ້ວຍສົບແຫຼມອອກມາໂດຍຄວາມປອດໄພໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນໄຂ່ໄກ່ ໘ ໜ່ວຍ ໑໐ ໜ່ວຍ ຫຼື ໑໒ ໜ່ວຍນັ້ນ ໄກ່ແມ່ບໍ່ເຕັງ ບໍ່ໝູບ ບໍ່ຟັກໃຫ້ດີ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອບໍ່ປະກອບພາວະນາຢູ່ສະເໝີ ໆ ເຖິງຈະມີຄວາມປາຖະໜາ ແນວນີ້ວ່າ ເຮັດແນວໃດນໍ ຈິດຂອງເຮົາຈຶ່ງຈະລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ກໍຈິງ ເຖິງແນວນັ້ນ ຈິດຂອງທ່ານກໍບໍ່ລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນໄດ້ເລີຍ ຂໍ້ນັ້ນ ຍ້ອນເຫດໃດ ຂໍ້ນັ້ນ ເພິ່ງກ່າວໄດ້ວ່າ ຍ້ອນທ່ານບໍ່ໄດ້ຈະເລີນ

ຍ້ອນທ່ານບໍ່ໄດ້ຈະເລີນອັນໃດ?

ຄື ຍ້ອນທ່ານບໍ່ໄດ້ຈະເລີນສະຕິປັດຖານ ໔ ປະການ ບໍ່ໄດ້ຈະເລີນສຳມັບປະທານ ໔ ປະການ ບໍ່ໄດ້ຈະເລີນອິດທິບາດ ໔ ປະການ ບໍ່ໄດ້ຈະເລີນອິນຊີ ໕ ປະການ ບໍ່ໄດ້ຈະເລີນພະລະ ໕ ປະການ ບໍ່ໄດ້ຈະເລີນໂພດຊົງ ໗ ປະການ ບໍ່ໄດ້ຈະເລີນອະຣິຍະມັກມີອົງ ໘

ພິກຂຸທັງຫຼາຍ ເມື່ອພິກຂຸປະກອບພາວະນາຢູ່ສະເໝີ ໆ ເຖິງຈະບໍ່ມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຈິດຂອງເຮົາຈຶ່ງຈະລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ກໍຈິງ ເຖິງແນວນັ້ນ ຈິດຂອງທ່ານກໍລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນໄດ້ ຂໍ້ນັ້ນ ຍ້ອນເຫດໃດ ຂໍ້ນັ້ນເພິ່ງກ່າວໄດ້ວ່າ ຍ້ອນທ່ານໄດ້ຈະເລີນ

ຍ້ອນທ່ານໄດ້ຈະເລີນອັນໃດ?

ຄື ຍ້ອນທ່ານໄດ້ຈະເລີນສະຕິປັດຖານ ໔ ປະການ ໄດ້ຈະເລີນສໍາມັບປະທານ ໔ ປະການ ໄດ້ຈະເລີນອິດທິບາດ ໔ ປະການ ໄດ້ຈະເລີນອິນຊີ ໕ ປະການ ໄດ້ຈະເລີນພະລະ ໕ ປະການໄດ້ຈະເລີນໂພດຊົງ ໗ ປະການ ໄດ້ຈະເລີນອະຣິຍະມັກມີອົງ ໘

ໄຂ່ໄກ່ ໘ ໜ່ວຍ ໑໐ ໜ່ວຍ ຫຼື ໑໘ ໜ່ວຍ ໄຂ່ເຫຼົ່ານັ້ນ ໄກ່ແມ່ເຕັງ ໝູບ ຟັກໄວ້ດີ ໄກ່ແມ່ນັ້ນເຖິງຈະບໍ່ມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ລູກຂອງເຮົາຈຶ່ງຈະທໍາລາຍເປືອກໄຂ່ດ້ວຍປາຍເລັບຕີນ ຫຼື ດ້ວຍສົບແຫຼມ ອອກມາໂດຍຄວາມປອດໄພ ກໍຈິງ ເຖິງແນວນັ້ນ ໄກ່ນ້ອຍເຫຼົ່ານັ້ນ ກໍສາມາດທໍາລາຍເປືອກໄຂ່ດ້ວຍປາຍເລັບຕີນຫຼືດ້ວຍສົບແຫຼມ ອອກມາໂດຍຄວາມປອດໄພໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນໄຂ່ໄກ່ ໘ ໜ່ວຍ ໑໐ ໜ່ວຍ ຫຼື ໑໘ ໜ່ວຍນັ້ນ ໄກ່ແມ່ເຕັງ ໝູບ ຟັກໄວ້ດີແລ້ວ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອພິກຂຸປະກອບພາວະນາຢູ່ສະເໝີໆ ເຖິງຈະບໍ່ມີຄວາມປາຖະໜາ ແນວນີ້ວ່າ ເຮັດແນວໃດນໍ ຈິດຂອງເຮົາຈຶ່ງຈະລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ກໍຈິງ ເຖິງແນວນັ້ນ ຈິດຂອງທ່ານກໍລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນໄດ້ ຂໍ້ນັ້ນຍ້ອນເຫດໃດ ຂໍ້ນັ້ນ ເພິ່ງກ່າວໄດ້ວ່າ ຍ້ອນທ່ານໄດ້ຈະເລີນ

ຍ້ອນທ່ານໄດ້ຈະເລີນອັນໃດ

ຄື ຍ້ອນທ່ານໄດ້ຈະເລີນສະຕິປັດຖານ ໔ ປະການ ໄດ້ຈະເລີນສໍາມັບປະທານ ໔ ປະການ ໄດ້ຈະເລີນອິດທິບາດ ໔ ປະການ ໄດ້ຈະເລີນອິນຊີ ໕ ປະການ ໄດ້ຈະເລີນພະລະ ໕ ປະການ ໄດ້ຈະເລີນໂພດຊົງ ໗ ປະການ ໄດ້ຈະເລີນອະຣິຍະມັກມີອົງ ໘

ຮອຍນິ້ວມື ຫຼື ຮອຍນິ້ວໂປ້ມີຜາກົດຢູ່ທີ່ດ້າມມີດຂອງຊ່າງໄມ້ ຫຼື ລູກມືຂອງຊ່າງໄມ້ ແຕ່ຊ່າງໄມ້ຫຼືລູກມືຂອງຊ່າງໄມ້ນັ້ນ ບໍ່ຮູ້ວ່າ ມື້ນີ້ ດ້າມມີດຂອງເຮົາຫຽ້ນໄປປະມານທໍ່ນີ້ ເມື່ອວານນີ້ຫຽ້ນໄປປະມານທໍ່ນີ້ ມື້ກ່ອນ ໆ ຫຽ້ນໄປປະມານທໍ່ນີ້ ແທ້ທີ່ຈິງເມື່ອດ້າມມີດຫຽ້ນໄປແລ້ວ ຊ່າງໄມ້ຫຼືລູກມືຂອງຊ່າງໄມ້ນັ້ນ ກໍຮູ້ວ່າ ຫຽ້ນໄປແລ້ວ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນເມື່ອປະກອບພາວະນາຢູ່ສະເໝີ ໆ ກໍບໍ່ຮູ້ວ່າ ມື້ນີ້ ອາສະວະທັງຫຼາຍຂອງເຮົາໝົດໄປປະມານທໍ່ນີ້ ເມື່ອວານນີ້ໝົດໄປປະມານທໍ່ນີ້ ມື້ກ່ອນ ໆ ໝົດໄປປະມານທໍ່ນີ້ ກໍຈິງ ເຖິງແນວນັ້ນ ເມື່ອອາສະວະໝົດໄປແລ້ວ ທ່ານກໍຮູ້ວ່າ ໝົດໄປແລ້ວ

ພິກຂຸທັງຫຼາຍ ເມື່ອເຮືອເດີນສະມຸດທີ່ມັດດ້ວຍເຄື່ອງມັດຄືຫວາຍຈອດຢູ່ໃນນໍ້າຕະຫຼອດລະດູຝົນ ພໍເຖິງລະດູໜາວເຂົາກໍແກ່ຂຶ້ນບົກ ເຄື່ອງມັດເຫຼົ່ານັ້ນຖືກລົມແລະແດດ ຖືກຝົນຕົກໃສ່ຍ່ອມໂດກເປື່ອຍໄປໂດຍງ່າຍ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອປະກອບພາວະນາຢູ່ສະເໝີ ໆ ສັງໂຍດທັງຫຼາຍ ກໍເສື່ອມໝົດໄປໂດຍງ່າຍຄືກັນ

**ວາສີຊະຕະສູດທີ ໗ ຈົບ**

# ໑໐. ອະນິດຈະສັນຍາສູດ

## ວ່າດ້ວຍອະນິດຈະສັນຍາ

[໑໐໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະນິດຈະສັນຍາ (ຄວາມໝາຍຮູ້ວ່າບໍ່ທ່ຽງ) ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຄອບງຳກາມມະຣາຄະ (ຄວາມຕິດໃຈໃນການມະຄຸນ) ຮູບປະຣາຄະ (ຄວາມຕິດໃຈໃນຮູບປະທຳ) ພາວະຣາຄະ (ຄວາມຕິດໃຈໃນພົບ) ແລະອະວິດຊາ (ຄວາມບໍ່ຮູ້ຈິງ) ທັງປວງໄດ້ ຖອນອັດສະມິມານະ (ຄວາມຖືໂຕວ່າເປັນເຮົາ) ທັງປວງໄດ້

ໃນສາຣະທະລະດູ ຊາວນາເມື່ອໄຖນາດ້ວຍໄຖຄັນໃຫຍ່ ຍ່ອມໄຖທຳລາຍຮາກ (ຫຍ້າ) ທີ່ກ່ຽວເນື່ອງທຸກຂະນິດ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ຍ່ອມຄອບງຳກາມມະຣາຄະ ຮູບປະຣາຄະ ພາວະຣາຄະ ແລະ ອະວິດຊາທັງປວງໄດ້ ຖອນອັດສະມິມານະທັງປວງໄດ້

ປຽບເໝືອນ ຄົນກ່ຽວຫຍ້າມຸ້ງກະຕ່າຍ ກ່ຽວສຳເລັດແລ້ວ ຈັບປາຍ ສັ່ນ ຟາດລົງ ສະບັດອອກ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ຯລຯ ຖອນອັດສະມິມານະທັງປວງໄດ້

ເມື່ອພວງໝາກມ່ວງຂາດຈາກຂວັ້ນ ບັນດາໝາກມ່ວງເຫຼົ່ານັ້ນ ໝາກມ່ວງທີ່ຍັງຕິດຢູ່ທີ່ຂວັ້ນທັງໝົດກໍລຸດໄປຕາມພວງໝາກມ່ວງນັ້ນ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ຯລຯ ຖອນອັດສະມິມານະທັງປວງໄດ້

ກອນຂອງເຮືອນຍອດທັງໝົດກ່າຍໄປເຖິງຍອດ ລວມລົງທີ່ຍອດ ຍອດເຮືອນຊາວໂລກກ່າວວ່າເລີດກວ່າກອນເຫຼົ່ານັ້ນ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ຯລຯ ຖອນອັດສະມິມານະທັງປວງໄດ້

ກິ່ນຫອມທີ່ເກີດຈາກຮາກຂະນິດໃດຂະນິດໜຶ່ງ ເກດສະໜາຊາວໂລກກ່າວວ່າເລີດກວ່າກິ່ນຫອມທີ່ເກີດຈາກຮາກເຫຼົ່ານັ້ນ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວກໍຄືກັນສັນນັ້ນ ຯລຯ ຖອນອັດສະມິມານະທັງປວງໄດ້

ກິ່ນຫອມທີ່ເກີດຈາກແກ່ນຂະນິດໃດຂະນິດໜຶ່ງ ຈັນແດງຊາວໂລກກ່າວວ່າເລີດກວ່າກິ່ນຫອມທີ່ເກີດຈາກແກ່ນເຫຼົ່ານັ້ນ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ຯລຯ ຖອນອັດສະມິມານະທັງປວງໄດ້

ກິ່ນຫອມທີ່ເກີດຈາກດອກຊະນິດໃດຊະນິດໜຶ່ງ ດອກມະລິຊາວໂລກກ່າວວ່າເລີດກວ່າກິ່ນຫອມທີ່ເກີດຈາກດອກເຫຼົ່ານັ້ນ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ฯລฯ ຖອນອັດສະມິມານະທັງປວງໄດ້

ພຣະຣາຊາຜູ້ມີອຳນາດໜ້ອຍທັງປວງ ຍ່ອມຄ້ອຍຕາມພຣະເຈົ້າຈັກກະພັດ ພຣະເຈົ້າຈັກກະພັດຊາວໂລກກ່າວວ່າເລີດກວ່າພຣະຣາຊາຜູ້ມີອຳນາດໜ້ອຍເຫຼົ່ານັ້ນ ແມ່ນສັນໃດ?

ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ฯລฯ ຖອນອັດສະມິມານະທັງປວງໄດ້

ແສງສະຫວ່າງຂອງດວງດາວທັງໝົດ ບໍ່ເຖິງສ້ຽວທີ່ ໑໖ ແຫ່ງແສງສະຫວ່າງຂອງດວງຈັນ ແສງສະຫວ່າງຂອງດວງຈັນຊາວໂລກກ່າວວ່າ ເລີດກວ່າແສງສະຫວ່າງຂອງດວງດາວເຫຼົ່ານັ້ນ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ฯລฯ ຖອນອັດສະມິມານະທັງປວງໄດ້

ໃນສາຣະທະລະດູ ເມື່ອຝົນຂາດຫາຍ ປາສະຈາກກ້ອນເຟື້ອ ດວງອາທິດອຸໄທຂຶ້ນສູ່ທ້ອງຟ້າ ກຳຈັດຄວາມມືດທີ່ມີຢູ່ໃນອາກາດທັງໝົດ ຍ່ອມສ່ອງແສງ ແຜ່ແສງ ແລະແຈ່ມກະຈ່າງ ແມ່ນສັນໃດ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ກໍຄືກັນສັນນັ້ນ ຍ່ອມຄອບງຳກາມມະຣາຄະ ຣູບ ປະຣາຄະ ພາວະຣາຄະ ແລະ ອະວິດຊາທັງປວງໄດ້ ຖອນອັດສະມິມານະທັງປວງໄດ້

ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງຄອບງຳກາມມະຣາຄະທັງປວງໄດ້ ฯລฯ ຖອນອັດສະມິມານະທັງປວງໄດ້

ຄື ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ວ່າ ຣູບເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງຣູບເປັນດັ່ງນີ້ ຄວາມດັບແຫ່ງຣູບເປັນດັ່ງນີ້ ເວທະນາເປັນດັ່ງນີ້ ฯລฯ ສັນຍາເປັນດັ່ງນີ້ ฯລฯ ສັງຂານເປັນດັ່ງນີ້ ฯລฯ ວິນຍານເປັນດັ່ງນີ້ ຄວາມເກີດຂຶ້ນແຫ່ງວິນຍານເປັນດັ່ງນີ້ ຄວາມດັບແຫ່ງວິນຍານເປັນດັ່ງນີ້

ພິກຂຸທັງຫຼາຍ ອະນິດຈະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ແລ ຍ່ອມຄອບງຳກາມມະຣາຄະ ຣູບປະຣາຄະ ພາວະຣາຄະ ແລະ ອະວິດຊາທັງປວງໄດ້ ຖອນອັດສະມິມານະທັງປວງໄດ້

**ອະນິດຈະສັນຍາສູດທີ ໑໐ ຈົບ**

**ປຸບຜະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ນະທີສູດ
໒. ເຜນະປິນທູປະມະສູດ
໓. ນະຂະສິຂາສູດ
໗. ຄັດທູລະພັດທະສູດ
໙. ວາສີຊະຕະສູດ

໔. ປຸບຜະສູດ
໕. ໂຄມະຍະປິນທະສູດ
໖. ສຸດທິກະສູດ
໘. ທຸຕິຍະຄັດທູລະພັດທະສູດ
໑໐. ອະນິດຈະສັນຍາສູດ

### ມັດຊິມະປັນນາດ ຈົບບໍລິບູນ

## ລວມວັກທີ່ມີໃນມັດຊິມະປັນນາດນີ້ ຄື

໑. ອຸປະຍະວັກ
໒. ຂັດຊະນີຍະວັກ
໓. ປຸບຜະວັກ

໔. ອະຣະຫັນຕະວັກ
໕. ເຖຣະວັກ

### ລວມ ໕ ວັກ ຮຽກວ່າ ທຸຕິຍະປັນນາດ

# ຈູລະປັນນາດ

# ໑. ອັນຕະວັກ

### ໝວດວ່າດ້ວຍບ່ອນສຸດ

## ໑. ອັນຕະສູດ

### ວ່າດ້ວຍບ່ອນສຸດ

[໑໐໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບ່ອນສຸດ ໔ ຢ່າງ ຄື

໑. ບ່ອນສຸດຄືສັກກາຍະ (ກາຍຂອງຕົນ)
໒. ບ່ອນສຸດຄືເຫດເກີດແຫ່ງສັກກາຍະ
໓. ບ່ອນສຸດຄືຄວາມດັບແຫ່ງສັກກາຍະ
໔. ບ່ອນສຸດຄືປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັກກາຍະ

ບ່ອນສຸດຄືສັກກາຍະ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ບ່ອນສຸດຄືສັກກາຍະນັ້ນ ໄດ້ແກ່ ອຸປາທານຂັນ ໕ ປະການ

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ນີ້ຮຽກວ່າ ບ່ອນສຸດຄືສັກກາຍະ

ບ່ອນສຸດຄືເຫດເກີດແຫ່ງສັກກາຍະ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນ ແລະຄວາມກຳໜັດ ມີປົກກະຕິເພີດເພີນຍິ່ງໃນອາລົມນັ້ນ ໆ ໄດ້ແກ່

໑. ກາມຕັນຫາ (ຄວາມທະຍານຢາກໃນກາມ)
໒. ພະວະຕັນຫາ (ຄວາມທະຍານຢາກໃນພົບ)
໓. ວິພະວະຕັນຫາ (ຄວາມທະຍານຢາກໃນວິພົບ)

ນີ້ຮຽກວ່າ ບ່ອນສຸດຄືເຫດເກີດແຫ່ງສັກກາຍະ

ບ່ອນສຸດ ຄື ຄວາມດັບແຫ່ງສັກກາຍະ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ນີ້ຮຽກວ່າ ບ່ອນສຸດຄືຄວາມດັບແຫ່ງສັກກາຍະ

ບ່ອນສຸດ ຄື ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັກກາຍະ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ ໄດ້ແກ່

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ນີ້ຮຽກວ່າ ບ່ອນສຸດຄືປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັກກາຍະ
ພິກຂຸທັງຫຼາຍ ບ່ອນສຸດ ໔ ຢ່າງ ເຫຼົ່ານີ້ແລ

**ອັນຕະສູດທີ ໑ ຈົບ**

# ໒. ທຸກຂະສູດ

## ວ່າດ້ວຍທຸກ

[໑໐໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຸກ ທຸກຂະສະມຸໄທ (ເຫດ

ເກີດທຸກ) ທຸກຂະນິໂຣທະ (ຄວາມດັບທຸກ) ແລະ ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບທຸກ) ທ່ານທັງຫຼາຍຈົ່ງຟັງ

ທຸກ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ທຸກນັ້ນ ໄດ້ແກ່ ອຸປາທານຂັນ ໕ ປະການ

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ນີ້ຮຽກວ່າ ທຸກ

ທຸກຂະສະມຸໄທ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິເພີດເພີນຍິ່ງໃນອາລົມນັ້ນ ໆ ໄດ້ແກ່

໑. ກາມຕັນຫາ
໒. ພະວະຕັນຫາ
໓. ວິພະວະຕັນຫາ

ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກຂະນິໂຣທະ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ

**ທຸກຂະສູດທີ ໔ ຈົບ**

# ໓. ສັກກາຍະສູດ

## ວ່າດ້ວຍສັກກາຍະ

[໑໐໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງສັກກາຍະ ເຫດເກີດແຫ່ງສັກກາຍະ ຄວາມດັບແຫ່ງສັກກາຍະ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັກກາຍະ ທ່ານທັງຫຼາຍຈົ່ງຟັງ

ສັກກາຍະ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ສັກກາຍະນັ້ນ ໄດ້ແກ່ ອຸປາທານຂັນ ໕ ປະການ

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ฯລฯ ໕. ວິນຍານູປາທານະຂັນ

ນີ້ຮຽກວ່າ ສັກກາຍະ

ເຫດເກີດແຫ່ງສັກກາຍະ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນ ແລະຄວາມກຳໜັດ ມີປົກກະຕິເພີດເພີນຍິ່ງໃນອາລົມນັ້ນ ໆ ຄື

໑. ກາມຕັນຫາ
໒. ພະວະຕັນຫາ
໓. ວິພະວະຕັນຫາ

ນີ້ຮຽກວ່າ ເຫດເກີດແຫ່ງສັກກາຍະ

ຄວາມດັບແຫ່ງສັກກາຍະ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ນີ້ຮຽກວ່າ ຄວາມດັບແຫ່ງສັກກາຍະ

ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັກກາຍະ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັກກາຍະ

**ສັກກາຍະສູດທີ ໓ ຈົບ**

# ໔. ປະຣິນເຍັຍຍະສູດ

## ວ່າດ້ວຍທຳທີ່ຄວນກຳນົດຮູ້

[໑໐໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນກຳນົດຮູ້ ຄວາມກຳນົດຮູ້ ແລະ ບຸກຄົນຜູ້ກຳນົດຮູ້ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ຄວນກຳນົດຮູ້ ເປັນແນວໃດ?

ຄື ຮູບເປັນທຳທີ່ຄວນກຳນົດຮູ້ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນທຳທີ່ຄວນກຳນົດຮູ້
ເຫຼົ່ານີ້ຮຽກວ່າ ທຳທີ່ຄວນກຳນົດຮູ້

ຄວາມກຳນົດຮູ້ ເປັນແນວໃດ?

ຄື ຄວາມໝົດຣາຄະ ຄວາມໝົດໂທສະ ຄວາມໝົດໂມຫະ

ນີ້ຮຽກວ່າ ຄວາມກຳນົດຮູ້

ບຸກຄົນຜູ້ກຳນົດຮູ້ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ບຸກຄົນຜູ້ກຳນົດຮູ້ນັ້ນ ຄື ພຣະອະຣະຫັນ ໄດ້ແກ່ ທ່ານຜູ້ມີຊື່ແນວນີ້ມີໂຄດແນວນີ້
ນີ້ຮຽກວ່າ ບຸກຄົນຜູ້ກຳນົດຮູ້

**ປະຣິນເຍັຍຍະສູດທີ ໔ ຈົບ**

# ໕. ສະມະນະສູດ

## ວ່າດ້ວຍສະມະນະ

[໑໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸປາທານຂັນ ໕ ປະການນີ້
ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ແລະບໍ່ຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນ ກໍບໍ່ເຮັດໃຫ້ແຈ້ງເຊິ່ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນຈັດວ່າເປັນສະມະນະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ສະມະນະສູດທີ ໕ ຈົບ**

# ໖. ທຸຕິຍະສະມະນະສູດ

## ວ່າດ້ວຍສະມະນະ ສູດທີ ໔

[໑໐໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸປາທານຂັນ ໕ ປະການນີ້
ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ ຕາມຄວາມເປັນຈິງ ฯลฯ

ພິກຂຸທັງຫຼາຍ ສ່ວນສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງ ฯลฯ ທັງທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງ ເຊິ່ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະສະມະນະສູດທີ ໖ ຈົບ**

# ໗. ໂສຕາປັນນະສູດ

## ວ່າດ້ວຍພຣະໂສດາບັນ

[໑໐໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸປາທານຂັນ ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ฯลฯ ໕. ວິນຍານູປາທານະຂັນ

ພິກຂຸທັງຫຼາຍ ເມື່ອໃດອະຣິຍະສາວົກຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ

ອະຣິຍະສາວົກນີ້ເຮົາຮຽກວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ໂສຕາປັນນະສູດທີ ໗ ຈົບ**

# ໘. ອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນ

[໑໑໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸປາທານຂັນ ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ເປັນຜູ້ລຸດພົ້ນ

ຍ້ອນບໍ່ຖືໝັ້ນ ເມື່ອນັ້ນ ພິກຂຸນີ້ເຮົາຮຽກວ່າ ພິກຂຸຜູ້ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ໝົດພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ

**ອະຣະຫັນຕະສູດທີ ໗ ຈົບ**

## ໙. ສັນທະປະຫານະສູດ

### ວ່າດ້ວຍການລະຄວາມພໍໃຈ

[໑໑໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກໃນຣູບ ເມື່ອເປັນແນວນີ້ ຣູບນັ້ນກໍຈັກເປັນອັນທ່ານທັງຫຼາຍລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ທ່ານທັງຫຼາຍ ຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີນເພີນ ຄວາມທະຍານຢາກໃນວິນຍານ ເມື່ອເປັນແນວນີ້ ວິນຍານນັ້ນ ກໍຈັກເປັນອັນທ່ານທັງຫຼາຍລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

**ສັນທະປະຫານະສູດທີ ໙ ຈົບ**

## ໑໐. ທຸຕິຍະສັນທະປະຫານະສູດ

### ວ່າດ້ວຍການລະຄວາມພໍໃຈ ສູດທີ ໒

[໑໑໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນຈົມໃນຮູບ ເມື່ອເປັນແນວນີ້ ຮູບນັ້ນກໍຈັກເປັນອັນທ່ານທັງຫຼາຍລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ฯลฯ ໃນເວທະນາ ฯลฯ ໃນສັນຍາ ฯลฯ ທ່ານທັງຫຼາຍ ຈົ່ງລະຄວາມພໍໃຈ ฯลฯ ໃນສັງຂານ ฯลฯ ເມື່ອເປັນແນວນີ້ສັງຂານນັ້ນກໍຈັກເປັນ ອັນທ່ານທັງຫຼາຍລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ທ່ານທັງຫຼາຍ ຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນຈົມໃນວິນຍານ ເມື່ອເປັນແນວນີ້ ວິນຍານນັ້ນ ກໍຈັກເປັນອັນທ່ານທັງຫຼາຍລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

**ທຸຕິຍະສັນທະປະທານະສູດທີ ໑໐ ຈົບ**

**ອັນຕະວັກທີ ໑ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

| | |
|---|---|
| ໑. ອັນຕະສູດ | ໒. ທຸກຂະສູດ |
| ໓. ສັກກາຍະສູດ | ໔. ປະຣິນເຍີຍຍະສູດ |
| ໕. ສະມະນະສູດ | ໖. ທຸຕິຍະສະມະນະສູດ |
| ໗. ໂສຕາປັນນະສູດ | ໘. ອະຣະຫັນຕະສູດ |
| ໙. ສັນທະປະທານະສູດ | ໑໐. ທຸຕິຍະສັນທະປະທານະສູດ |

# ໘. ທຳມະກະຖິກະວັກ

## ໝວດວ່າດ້ວຍພຣະທຳມະກະຖຶກ

## ໑. ອະວິດຊາສູດ

### ວ່າດ້ວຍອະວິດຊາ

[໑໑໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະ ດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຮູບ ບໍ່ຮູ້ແຈ້ງຄວາມເກີດແຫ່ງຮູບ ບໍ່ຮູ້ແຈ້ງຄວາມດັບແຫ່ງຮູບ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ບໍ່ຮູ້ແຈ້ງເວທະນາ ຯລຯ ບໍ່ຮູ້ແຈ້ງສັນຍາ ຯລຯ ບໍ່ຮູ້ແຈ້ງສັງຂານ ຯລຯ ບໍ່ຮູ້ແຈ້ງວິນຍານ ບໍ່ຮູ້ແຈ້ງຄວາມເກີດແຫ່ງວິນຍານ ບໍ່ຮູ້ແຈ້ງຄວາມດັບແຫ່ງວິນຍານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ພິກຂຸ ນີ້ເຮົາຮຽກວ່າ ອະວິດຊາ ແລະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

**ອະວິດຊາສູດທີ ໑ ຈົບ**

## ໒. ວິດຊາສູດ

### ວ່າດ້ວຍວິດຊາ

[໑໑໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະ

ອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະ ດ້ວຍເຫດພຽງທ່ໃດ ບຸກຄົນຈຶ່ງເປັນຜູ້ມີວິດຊາ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ອະຣິຍະສາວົກໃນທຳວິໄນນີ້ ຜູ້ໄດ້ສະດັບ ຮູ້ແຈ້ງຮູບ ຮູ້ແຈ້ງຄວາມເກີດແຫ່ງຮູບ ຯລຯ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ຮູ້ແຈ້ງສັງຂານ ຯລຯ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ພິກຂຸ ນີ້ເຮົາຮຽກວ່າ ວິດຊາ ແລະ ດ້ວຍເຫດພຽງທ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ວິດຊາສູດທີ ໘ ຈົບ**

# ໙. ທຳມະກະຖິກະສູດ

## ວ່າດ້ວຍພຣະທຳມະກະຖຶກ

[໑໑໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ພຣະພາກດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ພິກຂຸເປັນທຳມະກະຖຶກ ພິກຂຸເປັນທຳມະກະຖຶກ ດ້ວຍເຫດພຽງທ່ໃດ ພິກຂຸຈຶ່ງເປັນພຣະທຳມະກະຖຶກ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບ ຄວນຮຽກໄດ້ວ່າ ພິກຂຸເປັນທຳມະກະຖຶກ ຫາກພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບ ຄວນຮຽກໄດ້ວ່າ ພິກຂຸເປັນຜູ້ປະຕິບັດທຳສົມຄວນແກ່ທຳ ຫາກພິກຂຸເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ບໍ່ຖືໝັ້ນຮູບ ຄວນຮຽກໄດ້ວ່າ ພິກຂຸເປັນຜູ້ບັນລຸນິບພານໃນປັດຈຸບັນ

ຫາກພິກຂຸ ຯລຯ ເວທະນາ ຯລຯ
ຫາກພິກຂຸ ຯລຯ ສັນຍາ ຯລຯ
ຫາກພິກຂຸ ຯລຯ ສັງຂານ ຯລຯ

ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານ ຄວນຮຽກໄດ້ວ່າ ພິກຂຸເປັນທັມມະກະຖຶກ ຫາກພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍ

ກຳໜັດ ເພື່ອດັບວິນຍານ ຄວນຮຽກໄດ້ວ່າ ພິກຂຸເປັນຜູ້ປະຕິບັດທຳສົມຄວນແກ່ທຳ ຫາກພິກຂຸເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ບໍ່ຖືໝັ້ນວິນຍານ ຄວນຮຽກໄດ້ວ່າ ພິກຂຸເປັນຜູ້ບັນລຸນິບພານໃນປັດຈຸບັນ

**ທຳມະກະຖຶກະສູດທີ ໗ ຈົບ**

# ໘. ທຸຕິຍະທຳມະກະຖຶກະສູດ

## ວ່າດ້ວຍພຣະທຳມະກະຖຶກ ສູດທີ ໘

[໑໑໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ພິກຂຸເປັນທຳມະກະຖຶກ ພິກຂຸເປັນທຳມະກະຖຶກ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸຈຶ່ງເປັນພຣະທຳມະກະຖຶກ ດ້ວຍເຫດພຽງທໍ່ໃດ? ພິກຂຸຈຶ່ງເປັນຜູ້ປະຕິບັດທຳສົມຄວນແກ່ທຳ ດ້ວຍເຫດພຽງທໍ່ໃດ? ພິກຂຸຈຶ່ງເປັນຜູ້ບັນລຸນິບພານໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບ ຄວນຮຽກໄດ້ວ່າ ພິກຂຸເປັນທຳມະກະຖຶກ ຫາກພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບ ຄວນຮຽກໄດ້ວ່າ ພິກຂຸ ເປັນຜູ້ປະຕິບັດທຳສົມຄວນແກ່ທຳ ຫາກພິກຂຸເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ບໍ່ຖືໝັ້ນຮູບ ຄວນຮຽກໄດ້ວ່າ ພິກຂຸເປັນຜູ້ບັນລຸນິບພານໃນປັດຈຸບັນ

ຫາກພິກຂຸ ຯລຯ ເວທະນາ ຯລຯ
ຫາກພິກຂຸ ຯລຯ ສັນຍາ ຯລຯ
ຫາກພິກຂຸ ຯລຯ ສັງຂານ ຯລຯ

ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານ ຄວນຮຽກໄດ້ວ່າ ພິກຂຸເປັນທຳມະກະຖຶກ ຫາກພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບວິນຍານ ຄວນຮຽກໄດ້ວ່າ ພິກຂຸເປັນຜູ້ປະຕິບັດທຳສົມຄວນແກ່ທຳ ຫາກພິກຂຸເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ບໍ່ຖືໝັ້ນວິນຍານ ຄວນຮຽກໄດ້ວ່າ ພິກຂຸເປັນຜູ້ບັນລຸນິບພານໃນປັດຈຸບັນ

**ທຸຕິຍະທຳມະກະຖຶກະສູດທີ ໘ ຈົບ**

# ໕. ພັນທະນະສູດ

## ວ່າດ້ວຍເຄື່ອງພັນທະນາການ

[໑໑໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ຯລຯ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ນີ້ຮຽກວ່າ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຖືກເຄື່ອງພັນທະນາການຄືຮູບຄຸມຂັງໄວ້ ຖືກເຄື່ອງພັນທະນາການທັງພາຍໃນແລະພາຍນອກຄຸມຂັງໄວ້ ແນມບໍ່ເຫັນຝັ່ງນີ້ ແນມບໍ່ເຫັນຝັ່ງນັ້ນ ຖືກຄຸມຂັງຈົນແກ່ ຖືກຄຸມຂັງຈົນຕາຍ ຖືກຄຸມຂັງຈາກໂລກນີ້ຈົນເຖິງໂລກໜ້າ

ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ຯລຯ ອັດຕາໃນເວທະນາ ນີ້ຮຽກວ່າ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຖືກເຄື່ອງພັນທະນາການຄືເວທະນາຄຸມຂັງໄວ້ ຖືກເຄື່ອງພັນທະນາການທັງພາຍໃນແລະພາຍນອກຄຸມຂັງໄວ້ ແນມບໍ່ເຫັນຝັ່ງນີ້ ແນມບໍ່ເຫັນຝັ່ງນັ້ນ ຖືກຄຸມຂັງຈົນແກ່ ຖືກຄຸມຂັງຈົນຕາຍ ຖືກຄຸມຂັງຈາກໂລກນີ້ຈົນເຖິງໂລກໜ້າ

ພິຈາລະນາເຫັນ ສັນຍາ ຯລຯ
ພິຈາລະນາເຫັນ ສັງຂານ ຯລຯ

ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ຯລຯ ນີ້ຮຽກວ່າ ປຸຖຸຊົນຜູ້ບໍ່ໄດ້ສະດັບ ຖືກເຄື່ອງພັນທະນາການຄືວິນຍານຄຸມຂັງໄວ້ ຖືກເຄື່ອງພັນທະນາການທັງພາຍໃນ ແລະພາຍນອກຄຸມຂັງໄວ້ ແນມບໍ່ເຫັນຝັ່ງນີ້ ແນມບໍ່ເຫັນຝັ່ງນັ້ນ ຖືກຄຸມຂັງຈົນແກ່ ຖືກຄຸມຂັງຈົນຕາຍ ຖືກຄຸມຂັງຈາກໂລກນີ້ຈົນເຖິງໂລກໜ້າ

ພິກຂຸທັງຫຼາຍ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ຯລຯ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ

ນີ້ຮຽກວ່າ ອະຣິຍະສາວົກຜູ້ໄດ້ສະດັບ ບໍ່ຖືກເຄື່ອງພັນທະນາການຄືຮູບຄຸມຂັງໄວ້ ບໍ່ຖືກເຄື່ອງພັນທະນາການທັງພາຍໃນແລະພາຍນອກຄຸມຂັງໄວ້ ແນມເຫັນຝັ່ງນີ້ ແນມເຫັນຝັ່ງນັ້ນ ເຮົາກ່າວວ່າ ທ່ານພົ້ນແລ້ວຈາກທຸກ ຯລຯ

ບໍ່ພິຈາລະນາເຫັນ ເວທະນາ ຯລຯ
ບໍ່ພິຈາລະນາເຫັນ ສັນຍາ ຯລຯ
ບໍ່ພິຈາລະນາເຫັນ ສັງຂານ ຯລຯ
ບໍ່ພິຈາລະນາເຫັນ ວິນຍານ ໂດຍຄວາມເປັນອັດຕາ ຯລຯ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະຣິຍະສາວົກຜູ້ໄດ້ສະດັບ ບໍ່ຖືກເຄື່ອງພັນທະນາການຄືວິນຍານຄຸມຂັງໄວ້ ບໍ່ຖືກເຄື່ອງພັນທະນາການທັງພາຍໃ ນແລະພາຍນອກຄຸມຂັງໄວ້ ແນມເຫັນຝັ່ງນີ້ ແນມເຫັນຝັ່ງນັ້ນ ເຮົາກ່າວວ່າ ທ່ານພົ້ນແລ້ວຈາກທຸກ

**ພັນທະນະສູດທີ ໕ ຈົບ**

## ໖. ປະຣິປຸດສິຕະສູດ

### ວ່າດ້ວຍການສອບຖາມ

[໑໑໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານທັງຫຼາຍ ພິຈາລະນາເຫັນຮູບວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາບໍ?

ພິກຂຸທັງຫຼາຍ ທູນຕອບວ່າ ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງເຫັນຮູບນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ທ່ານທັງຫຼາຍ ພິຈາລະນາເຫັນວິນຍານວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງເຫັນວິນຍານນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ປະຣິປຸດສິຕະສູດທີ ໖ ຈົບ**

# ໗. ທຸຕິຍະປະຣິປຸດສິຕະສູດ

## ວ່າດ້ວຍການສອບຖາມ ສູດທີ ໔

[໑໑໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ທ່ານທັງຫຼາຍພິຈາລະນາເຫັນຣູບວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາບໍ?

ພິກຂຸທັງຫຼາຍ ທູນຕອບວ່າ ເປັນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງເຫັນຣູບນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ທ່ານທັງຫຼາຍພິຈາລະນາເຫັນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາບໍ?

ເປັນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງເຫັນວິນຍານນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸຕິຍະປະຣິປຸດສິຕະສູດທີ ໗ ຈົບ**

# ໘. ສັນໂຍຊະນິຍະສູດ

## ວ່າດ້ວຍທຳທີ່ເກື້ອກູນແກ່ສັງໂຍດ

[໑໘໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເກື້ອກູນແກ່ສັງໂຍດ ແລະສັງໂຍດ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເກື້ອກູນແກ່ສັງໂຍດ ເປັນແນວໃດ? ສັງໂຍດ ເປັນແນວໃດ?

ຄື ຮູບເປັນທຳທີ່ເກື້ອກູນແກ່ສັງໂຍດ ສັນທະຣາຄະໃນຮູບນັ້ນເປັນສັງໂຍດ

ເວທະນາ ฯลฯ
ສັນຍາ ฯลฯ
ສັງຂານ ฯลฯ

ວິນຍານເປັນທຳທີ່ເກື້ອກູນແກ່ສັງໂຍດ ສັນທະຣາຄະໃນວິນຍານນັ້ນເປັນສັງໂຍດ

ພິກຂຸທັງຫຼາຍ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ສັງໂຍດ ຮຽກວ່າ ສັງໂຍດ

**ສັນໂຍຊະນິຍະສູດທີ ໙ ຈົບ**

# ໑໐. ອຸປາທານິຍະສູດ

## ວ່າດ້ວຍທຳທີ່ເກື້ອກູນແກ່ອຸປາທານ

[໑໘໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເກື້ອກູນແກ່ອຸປາທານ ແລະອຸປາທານ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເກື້ອກູນແກ່ອຸປາທານ ເປັນແນວໃດ? ອຸປາທານ ເປັນແນວໃດ?

ຄື ຮູບເປັນທຳທີ່ເກື້ອກູນແກ່ອຸປາທານ ສັນທະຣາຄະໃນຮູບນັ້ນເປັນອຸປາທານ

ເວທະນາ ฯลฯ
ສັນຍາ ฯลฯ
ສັງຂານ ฯลฯ

ວິນຍານເປັນທຳທີ່ເກື້ອກູນແກ່ອຸປາທານ ສັນທະຣາຄະໃນວິນຍານນັ້ນເປັນອຸປາທານ

ພິກຂຸທັງຫຼາຍ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ອຸປາທານ ເຮົາຮຽກວ່າ ອຸປາທານ

**ອຸປາທານິຍະສູດທີ ໑໐ ຈົບ**

# ໑໐. ສີລະວັນຕະສູດ

## ວ່າດ້ວຍທຳທີ່ພິກຂຸຜູ້ມີສີນຄວນມະນະສິການໂດຍແຍບຄາຍ

[໑໘໔] ສະໄໝໜຶ່ງ ທ່ານພຣະສາຣີບຸດແລະທ່ານພຣະມະຫາໂກດຖິຕະ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຄັ້ງນັ້ນ ທ່ານພຣະມະຫາໂກດຖິຕະອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ຯລຯ ໄດ້ຖາມດັ່ງນີ້ ວ່າ

ທ່ານສາຣີບຸດ ທຳເຫຼົ່າໃດ? ອັນພິກຂຸຜູ້ມີສີນຄວນມະນະສິການໂດຍແຍບຄາຍ ຂ້ານ້ອຍ

ທ່ານພຣະສາຣີບຸດຕອບວ່າ ທ່ານໂກດຖິຕະ ອຸປາທານຂັນ ໕ ປະການອັນພິກຂຸຜູ້ມີສີນຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນຂອງລຳບາກ ເປັນອາພາດ ເປັນແນວອື່ນ (ບັງຄັບບໍ່ໄດ້) ເປັນຂອງຊຸດໂຊມ ເປັນຂອງສູນ ເປັນອະນັດຕາ

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ອຸປາທານຂັນ ໕ ປະການນີ້ ອັນພິກຂຸຜູ້ມີສີນຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນຂອງລຳບາກ ເປັນອາພາດ ເປັນແນວອື່ນ ເປັນຂອງຊຸດໂຊມ ເປັນຂອງສູນ ເປັນອະນັດຕາ ເປັນໄປໄດ້ທີ່ອຸປາທານຂັນ ໕ ປະການນີ້ ອັນພິກຂຸຜູ້ມີສີນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເພິ່ງເຮັດໃຫ້ແຈ້ງໂສດາປັດຕິຜົນ

ທ່ານສາຣີບຸດ ທຳເຫຼົ່າໃດ? ອັນພິກຂຸຜູ້ເປັນໂສດາບັນ ຄວນມະນະສິການໂດຍແຍບຄາຍ ຂ້ານ້ອຍ

ທ່ານໂກດຖິຕະ ອຸປາທານຂັນ ໕ ປະການນີ້ ອັນພິກຂຸແມ່ນຜູ້ເປັນໂສດາບັນ ກໍຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເປັນໄປໄດ້ທີ່ພິກຂຸ

ຜູ້ເປັນໂສດາບັນມະນະສິການອຸປາທານຂັນ ໕ ປະການນີ້ໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເພິ່ງເຮັດໃຫ້ແຈ້ງສະກະທາຄາມິຜົນ

ທ່ານສາຣີບຸດ ທຳເຫຼົ່າໃດ ອັນພິກຂຸແມ່ນຜູ້ເປັນສະກະທາຄາມີຄວນມະນະສິການໂດຍແຍບຄາຍ ຂ້ານ້ອຍ

ທ່ານໂກດຖິຕະ ອຸປາທານຂັນ ໕ ປະການນີ້ອັນພິກຂຸແມ່ນຜູ້ເປັນສະກະທາຄາມີ ກໍຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເປັນໄປໄດ້ທີ່ພິກຂຸຜູ້ເປັນສະກະທາຄາມີມະນະສິການອຸປາທານຂັນ ໕ ປະການນີ້ໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເພິ່ງເຮັດໃຫ້ແຈ້ງອະນາຄາມິຜົນ

ທ່ານສາຣີບຸດ ທຳເຫຼົ່າໃດ ອັນພິກຂຸຜູ້ເປັນອະນາຄາມີຄວນມະນະສິການໂດຍແຍບຄາຍ ຂ້ານ້ອຍ

ທ່ານໂກດຖິຕະ ອຸປາທານຂັນ ໕ ປະການນີ້ອັນພິກຂຸແມ່ນຜູ້ເປັນອະນາຄາມີກໍຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເປັນໄປໄດ້ທີ່ພິກຂຸຜູ້ເປັນອະນາຄາມີມະນະສິການອຸປາທານຂັນ ໕ ປະການນີ້ໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເພິ່ງເຮັດໃຫ້ແຈ້ງອະຣະຫັດຕະຜົນ

ທ່ານສາຣີບຸດ ທຳເຫຼົ່າໃດ? ອັນພິກຂຸຜູ້ເປັນອະຣະຫັນ ຄວນມະນະສິການໂດຍແຍບຄາຍ ຂ້ານ້ອຍ

ທ່ານໂກດຖິຕະ ອຸປາທານຂັນ ໕ ປະການນີ້ ອັນພິກຂຸແມ່ນຜູ້ເປັນອະຣະຫັນກໍຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນຂອງລຳບາກ ເປັນອາພາດ ເປັນແນວອື່ນ ເປັນຂອງຊຸດໂຊມ ເປັນຂອງສູນ ເປັນອະນັດຕາ

ທ່ານໂກດຖິຕະ ກິດທີ່ຈະເພິ່ງເຮັດໃຫ້ຍິ່ງຂຶ້ນໄປ ຫຼື ການສັ່ງສົມກິດທີ່ເຮັດແລ້ວ ຍ່ອມບໍ່ມີແກ່ພິກຂຸຜູ້ເປັນອະຣະຫັນ ອັນໜຶ່ງ ທຳເຫຼົ່ານີ້ ທີ່ພິກຂຸຜູ້ເປັນອະຣະຫັນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປັດຈຸບັນ ແລະ ເພື່ອສະຕິສຳປະຊັນຍະ

**ສີລະວັນຕະສູດທີ ໑໐ ຈົບ**

# ໑໑. ສຸຕະວັນຕະສູດ

## ວ່າດ້ວຍທຳທີ່ພິກຂຸຜູ້ໄດ້ສະດັບຄວນມະນະສິການໂດຍແຍບຄາຍ

[໑໘໓] ສະໄໝໜຶ່ງ ທ່ານພຣະສາຣີບຸດແລະທ່ານພຣະມະຫາໂກດຖິຕະ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຄັ້ງນັ້ນ ທ່ານພຣະມະຫາໂກດຖິຕະອອກຈາກທີ່ຫຼີບຫຼີກໃນເວລາຄ່ຳ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ຯລຯ ໄດ້ຖາມດັ່ງນີ້ ວ່າ

ທ່ານສາຣີບຸດ ທຳເຫຼົ່າໃດ? ອັນພິກຂຸຜູ້ໄດ້ສະດັບຄວນມະນະສິການໂດຍແຍບຄາຍ

ທ່ານພຣະສາຣີບຸດຕອບວ່າ ທ່ານໂກດຖິຕະ ອຸປາທານຂັນ ໕ ປະການອັນພິກຂຸຜູ້ໄດ້ສະດັບຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ທ່ານໂກດຖິຕະ ອຸປາທານຂັນ ໕ ປະການນີ້ ອັນພິກຂຸຜູ້ໄດ້ສະດັບຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເປັນໄປໄດ້ທີ່ພິກຂຸຜູ້ໄດ້ສະດັບມະນະສິການອຸປາທານຂັນ ໕ ປະການນີ້ໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ

ທ່ານສາຣີບຸດ ທຳເຫຼົ່າໃດ? ອັນພິກຂຸຜູ້ເປັນໂສດາບັນຄວນມະນະສິການໂດຍແຍບຄາຍຂ້ານ້ອຍ

ທ່ານໂກດຖິຕະ ອຸປາທານຂັນ ໕ ປະການນີ້ ອັນພິກຂຸແມ່ນຜູ້ເປັນໂສດາບັນກໍຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເປັນໄປໄດ້ທີ່ພິກຂຸຜູ້ເປັນໂສດາບັນມະນະສິການອຸປາທານຂັນ ໕ ປະການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ຯລຯ ເປັນອະນັດຕາ ເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ອະນາຄາມິຜົນ ຯລຯ ອະຣະຫັດຕະຜົນ

ທ່ານສາຣີບຸດ ທຳເຫຼົ່າໃດ? ອັນພິກຂຸຜູ້ເປັນອະຣະຫັນ ຄວນມະນະສິການໂດຍແຍບຄາຍຂ້ານ້ອຍ

ທ່ານໂກດຖິຕະ ອຸປາທານຂັນ ໕ ປະການນີ້ອັນພິກຂຸແມ່ນຜູ້ເປັນອະຣະຫັນກໍຄວນມະນະສິການໂດຍແຍບຄາຍ ໂດຍຄວາມເປັນຂອງບໍ່ທ່ຽງ ເປັນທຸກ ເປັນພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນຄວາມຄັບແຄ້ນ ເປັນອາພາດ ເປັນແນວອື່ນ ເປັນຂອງຊຸດໂຊມ ເປັນຂອງສູນ ເປັນອະນັດຕາ

ທ່ານໂກດຖິຕະ ກິດທີ່ຈະເພີ່ງເຮັດໃຫ້ຍິ່ງຂຶ້ນໄປ ຫຼື ການສັ່ງສົມກິດທີ່ເຮັດແລ້ວ ຍ່ອມບໍ່ມີແກ່ພິກຂຸຜູ້ອະຣະຫັນ ອັນໜຶ່ງ ທຳເຫຼົ່ານີ້ທີ່ພິກຂຸຜູ້ເປັນອະຣະຫັນຈະເລີນ ເຮັດໃຫ້ຫຼາຍແລ້ວຍ່ອມເປັນໄປເພື່ອຢູ່ເປັນສຸກໃນປັດຈຸບັນ ແລະ ເພື່ອສະຕິສຳປະຊັນຍະ

**ສຸຕະວັນຕະສູດທີ່ ໑໑ ຈົບ**

# ໑໘. ກັບປະສູດ

## ວ່າດ້ວຍພຣະກັບປະ

[໑໘໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະກັບປະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ ເຫັນແນວໃດ ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະ ມານານຸໄສໃນກາຍທີ່ມີວິນຍານນີ້ ແລະໃນນິມິດທັງປວງໃນພາຍນອກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ກັບປະ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ບຸກຄົນເຫັນຮູບທັງໝົດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ແນວໃດແນວໜຶ່ງ ຯລຯ
ສັນຍາ ແນວໃດແນວໜຶ່ງ ຯລຯ
ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ບຸກຄົນເຫັນວິນຍານທັງໝົດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ກັບປະ ເມື່ອບຸກຄົນຮູ້ ເຫັນແນວນີ້ ຈຶ່ງຈະບໍ່ມີອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະ ໃນນິມິດທັງປວງໃນພາຍນອກ

**ກັບປະສູດທີ່ ໑໘ ຈົບ**

# ໑໙. ທຸຕິຍະກັບປະສູດ

## ວ່າດ້ວຍພຣະກັບປະ ສູດທີ ໘

[໑໘໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະກັບປະ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອບຸກຄົນຮູ້ ເຫັນແນວໃດ? ໃຈຈຶ່ງຈະປາສະຈາກອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະໃນນິມິດທັງປວງໃນພາຍນອກ ກ້າວລ່ວງມານະດ້ວຍດີ ສະງົບລະງັບ ລຸດພົ້ນດີແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ກັບປະ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຯລຯ ບຸກຄົນເຫັນຮູບທັງໝົດນັ້ນ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນແລ້ວ ຍ້ອນບໍ່ຖືໝັ້ນ

ເວທະນາແນວໃດແນວໜຶ່ງ ຯລຯ
ສັນຍາແນວໃດແນວໜຶ່ງ ຯລຯ
ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ບຸກຄົນເຫັນວິນຍານທັງໝົດນັ້ນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ເປັນຜູ້ລຸດພົ້ນແລ້ວ ຍ້ອນບໍ່ຖືໝັ້ນ

ກັບປະ ເມື່ອບຸກຄົນຮູ້ ເຫັນແນວນີ້ ໃຈຈຶ່ງຈະປາສະຈາກອະຫັງການ ມະມັງການ ແລະມານານຸໄສໃນກາຍທີ່ມີວິນຍານນີ້ ແລະ ໃນນິມິດທັງປວງໃນພາຍນອກ ກ້າວລ່ວງມານະດ້ວຍດີ ສະງົບລະງັບ ລຸດພົ້ນດີແລ້ວ

**ທຸຕິຍະກັບປະສູດທີ ໑໙ ຈົບ**

**ທຳມະກະຖິກະວັກທີ ໘ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

# ໓. ອະວິດຊາວັກ

## ໝວດວ່າດ້ວຍອະວິດຊາ

## ໑. ສະມຸທະຍະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາ

[໑໔໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນເປັນທຳມະດາ ບໍ່ຮູ້ແຈ້ງຮູບທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເສື່ອມໄປເປັນທຳມະດາ ບໍ່ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ

ບໍ່ຮູ້ແຈ້ງເວທະນາທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ເວທະນາມີຄວາມເກີດຂຶ້ນເປັນທຳມະດາ ບໍ່ຮູ້ແຈ້ງເວທະນາທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ເວທະນາມີຄວາມເສື່ອມໄປເປັນທຳມະດາ ບໍ່ຮູ້ແຈ້ງເວທະນາທີ່ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ ຯລຯ

ບໍ່ຮູ້ແຈ້ງສັນຍາທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ

ບໍ່ຮູ້ແຈ້ງສັງຂານທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ສັງຂານມີຄວາມເກີດຂຶ້ນເປັນທຳມະດາ ບໍ່ຮູ້ແຈ້ງສັງຂານທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ສັງຂານມີຄວາມເສື່ອມໄປເປັນທຳມະດາ ບໍ່ຮູ້ແຈ້ງສັງຂານທີ່ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ສັງຂານມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ບໍ່ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ວິນຍານມີ

ຄວາມເກີດຂຶ້ນເປັນທຳມະດາ ບໍ່ຮູ້ແຈ້ງວິນຍານທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ວິນຍານມີຄວາມເສື່ອມໄປເປັນທຳມະດາ ບໍ່ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ວິນຍານມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ

ພິກຂຸ ນີ້ເຮົາຮຽກວ່າ ອະວິດຊາ ແລະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຕອບແນວນີ້ແລ້ວ ພິກຂຸອົງນັ້ນໄດ້ທູນຖາມວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະ ດ້ວຍເຫດພຽງທໍ່ໃດ ບຸກຄົນຈຶ່ງເປັນຜູ້ມີວິດຊາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ອະຣິຍະສາວົກໃນທຳວິໄນນີ້ຜູ້ໄດ້ສະດັບ ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນເປັນທຳມະດາ ຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນເປັນທຳມະດາ

ຮູ້ແຈ້ງຮູບທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເສື່ອມໄປເປັນທຳມະດາ ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ຮູ້ແຈ້ງເວທະນາທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ເວທະນາມີຄວາມເກີດຂຶ້ນເປັນທຳມະດາ ຮູ້ແຈ້ງເວທະນາທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ເວທະນາມີຄວາມເສື່ອມໄປເປັນທຳມະດາ ຮູ້ແຈ້ງເວທະນາທີ່ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ເວທະນາມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ

ຮູ້ແຈ້ງ ສັນຍາ ທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ

ຮູ້ແຈ້ງສັງຂານທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ສັງຂານມີຄວາມເກີດຂຶ້ນເປັນທຳມະດາ ຮູ້ແຈ້ງສັງຂານທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ສັງຂານມີຄວາມເສື່ອມໄປເປັນທຳມະດາ ຮູ້ແຈ້ງສັງຂານທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາວ່າ ສັງຂານມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ

ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ວິນຍານມີຄວາມເກີດຂຶ້ນເປັນທຳມະດາ ຮູ້ແຈ້ງວິນຍານທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ

ວິນຍານມີຄວາມເສື່ອມໄປເປັນທຳມະດາ ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ວິນຍານມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ພິກຂຸ ນີ້ເຮົາຮຽກວ່າ ວິດຊາ ແລະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ສະມຸທະຍະທຳມະສູດທີ ໑ ຈົບ**

# ໔. ທຸຕິຍະສະມຸທະຍະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາ ສູດທີ ໔

[໑໔໗] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂກດຖິຕະຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຄັ້ງນັ້ນ ທ່ານພຣະມະຫາໂກດຖິຕະອອກຈາກທີ່ຫຼີບຫຼີກໃນເວລາຄ່ຳ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນເປັນທຳມະດາ ບໍ່ຮູ້ແຈ້ງຮູບທີ່ມີຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງ ຯລຯ ບໍ່ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ

ບໍ່ຮູ້ແຈ້ງເວທະນາທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ ເວທະນາທີ່ມີຄວາມເສື່ອມໄປເປັນທຳມະດາ ຯລຯ ບໍ່ຮູ້ແຈ້ງ ຯລຯ ຕາມຄວາມເປັນຈິງວ່າ ເວທະນາມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ

ບໍ່ຮູ້ແຈ້ງສັນຍາທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ

ບໍ່ຮູ້ແຈ້ງສັງຂານທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ ບໍ່ຮູ້ແຈ້ງສັງຂານທີ່ມີຄວາມເສື່ອມໄປເປັນທຳມະດາ ຯລຯ ບໍ່ຮູ້ແຈ້ງສັງຂານທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ສັງຂານທັງຫຼາຍ ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ບໍ່ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ ບໍ່ຮູ້ແຈ້ງວິນຍານທີ່ມີຄວາມເສື່ອມໄປເປັນທຳມະດາ ຯລຯ ບໍ່ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ວິນຍານມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ແລະດ້ວຍເຫດພຽງທີ່ນີ້ ບຸກຄົນ ຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

**ທຸຕິຍະສະມຸທະຍະທຳມະສູດທີ ໘ ຈົບ**

# ໙. ຕະຕິຍະສະມຸທະຍະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາສູດທີ ໙

[໑໘໗] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂກດຖິຕະ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ທ່ານພຣະມະຫາໂກດຖິຕະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະ ດ້ວຍເຫດພຽງທີ່ໃດນໍ? ບຸກຄົນຈຶ່ງເປັນຜູ້ມີວິດຊາ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ພຣະອະຣິຍະສາວົກໃນພຣະທຳວິໄນນີ້ຜູ້ໄດ້ສະດັບ ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນເປັນທຳມະດາ ຮູ້ແຈ້ງຮູບທີ່ມີຄວາມເສື່ອມໄປເປັນທຳມະດາ ຯລຯ ຮູ້ແຈ້ງຮູບທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ຮູບມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ຮູ້ແຈ້ງເວທະນາທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ ເວທະນາທີ່ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ ຯລຯ

ຮູ້ແຈ້ງ ສັນຍາ ທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ

ຮູ້ແຈ້ງ ສັງຂານ ທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ ສັງຂານທີ່ມີຄວາມເສື່ອມໄປເປັນທຳມະດາ ຯລຯ ຮູ້ແຈ້ງສັງຂານທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ສັງຂານທັງຫຼາຍມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນເປັນທຳມະດາ ຯລຯ ວິນຍານທີ່ມີຄວາມເສື່ອມໄປເປັນ

ທຳມະດາ ฯລฯ ຮູ້ແຈ້ງວິນຍານທີ່ມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາຕາມຄວາມເປັນຈິງວ່າ ວິນຍານມີຄວາມເກີດຂຶ້ນ ແລະຄວາມເສື່ອມໄປເປັນທຳມະດາ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ແລະດ້ວຍເຫດພຽງທີ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ຕະຕິຍະສະມຸທະຍະທຳມະສູດທີ ໓ ຈົບ**

# ໔. ອັດສາທະສູດ

## ວ່າດ້ວຍຄຸນຂອງຂັນ

[໑໔໙] ເລື້ອງເກີດຂຶ້ນທີ່ນະຄອນພາຣານະສີຄືກັນ

ທ່ານພຣະມະຫາໂກດຖິຕະ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະດ້ວຍເຫດພຽງທີ່ໃດນໍ? ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຄຸນໂທດ ແລະເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ບໍ່ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ແລະດ້ວຍເຫດພຽງທີ່ນີ້ ບຸກຄົນ ຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

**ອັດສາທະສູດທີ ໔ ຈົບ**

# ໕. ທຸຕິຍະອັດສາທະສູດ

## ວ່າດ້ວຍຄຸນຂອງຂັນ ສູດທີ ໔

[໑໕໐] ເລື້ອງເກີດຂຶ້ນທີ່ນະຄອນພາຣານະສີຄືກັນ

ທ່ານພຣະມະຫາໂກດຖິຕະ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

ທ່ານສາຣີບຸດ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ມີວິດຊາ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ພຣະອະຣິຍະສາວົກໃນພຣະທຳວິໄນນີ້

ຜູ້ໄດ້ສະດັບ ຮູ້ແຈ້ງຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ແລະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ທຸຕິຍະອັດສາທະສູດທີ ໘ ຈົບ**

# ໙. ສະມຸທະຍະສູດ

## ວ່າດ້ວຍຄວາມເກີດແຫ່ງຂັນ

[໑໙໑] ເລື້ອງເກີດຂື້ນທີ່ນະຄອນພາຣານະສີຄືກັນ

ທ່ານພຣະມະຫາໂກດຖິຕະ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ແລະດ້ວຍເຫດພຽງທໍ່ນີ້ ບຸກຄົນ ຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

**ສະມຸທະຍະສູດທີ ໙ ຈົບ**

# ໗. ທຸຕິຍະສະມຸທະຍະສູດ

## ວ່າດ້ວຍຄວາມເກີດແຫ່ງຂັນ ສູດທີ ໘

[໑໘໘] ເລື້ອງເກີດຂຶ້ນທີ່ນະຄອນພາຣານະສີຄືກັນ

ທ່ານພຣະມະຫາໂກດຖິຕະ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ມີວິດຊາ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ພຣະອະຣິຍະສາວົກໃນພຣະທຳວິໄນນີ້

ຜູ້ໄດ້ສະດັບ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ແລະດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ທຸຕິຍະສະມຸທະຍະສູດທີ ໗ ຈົບ**

# ໙. ໂກດຖິຕະສູດ

## ວ່າດ້ວຍພຣະໂກດຖິຕະ

[໑໘໙] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂກດຖິຕະຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຄັ້ງນັ້ນ ທ່ານພຣະສາຣີບຸດອອກຈາກຜົນສະມາບັດ ໃນເວລາຄໍ່າ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂກດຖິຕະດັ່ງນີ້ ວ່າ

ທ່ານໂກດຖິຕະ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະ ດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ທ່ານພຣະມະຫາໂກດຖິຕະຕອບວ່າ ທ່ານຜູ້ມີອາຍຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ

ສັນຍາ ฯลฯ ສັງຂານ ฯลฯ ບໍ່ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ແລະດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ເມື່ອທ່ານພຣະມະຫາໂກດຖິຕະຕອບແນວນີ້ແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ຖາມວ່າ ທ່ານໂກດຖິຕະ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດ ບຸກຄົນຈຶ່ງເປັນຜູ້ມີວິດຊາ

ທ່ານພຣະມະຫາໂກດຖິຕະຕອບວ່າ ທ່ານຜູ້ມີອາຍຸ ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ຜູ້ໄດ້ສະດັບ ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ฯลฯ ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ແລະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ໂກດຖິຕະສູດທີ ໗ ຈົບ**

# ໘. ທຸຕິຍະໂກດຖິຕະສູດ

## ວ່າດ້ວຍພຣະໂກດຖິຕະ ສູດທີ ໘

[໑໖໔] ເລື້ອງເກີດຂຶ້ນທີ່ນະຄອນພາຣານະສີຄືກັນ

ທ່ານພຣະສາຣີບຸດນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂກດຖິຕະດັ່ງນີ້ວ່າ ທ່ານໂກດຖິຕະ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ທ່ານພຣະມະຫາໂກດຖິຕະຕອບວ່າ ທ່ານຜູ້ມີອາຍຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ฯลฯ ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ແລະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ເມື່ອທ່ານພຣະມະຫາໂກດຖິຕະຕອບແນວນີ້ແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ຖາມວ່າ ທ່ານໂກດຖິຕະ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະ ດ້ວຍເຫດພຽງທໍ່ໃດ ບຸກຄົນຈຶ່ງເປັນຜູ້ມີວິດຊາ

ທ່ານພຣະມະຫາໂກດຖິຕະຕອບວ່າ ທ່ານຜູ້ມີອາຍຸ ພຣະອະຣິຍະສາວົກໃນພຣະທຳວິໄນນີ້ຜູ້ໄດ້ສະດັບ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກວິນຍານຕາມຄວາມເປັນຈິງ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ແລະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ທຸຕິຍະໂກດຖິຕະສູດທີ ໙ ຈົບ**

## ໑໐. ຕະຕິຍະໂກດຖິຕະສູດ

### ວ່າດ້ວຍພຣະໂກດຖິຕະ ສູດທີ ໓

[໑໓໕] ເລື້ອງເກີດຂຶ້ນທີ່ນະຄອນພາຣານະສີຄືກັນ

ທ່ານພຣະສາຣີບຸດນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂກດຖິຕະດັ່ງນີ້ວ່າ ທ່ານໂກດຖິຕະ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດນໍ ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ທ່ານພຣະມະຫາໂກດຖິຕະຕອບວ່າ ທ່ານຜູ້ມີອາຍຸ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ຮູ້ແຈ້ງ ຮູບ ບໍ່ຮູ້ແຈ້ງຄວາມເກີດແຫ່ງຮູບ ບໍ່ຮູ້ແຈ້ງຄວາມດັບແຫ່ງຮູບ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ບໍ່ຮູ້ແຈ້ງເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ຮູ້ແຈ້ງວິນຍານ ບໍ່ຮູ້ແຈ້ງ ຄວາມເກີດແຫ່ງວິນຍານ ບໍ່ຮູ້ແຈ້ງຄວາມດັບແຫ່ງວິນຍານ ບໍ່ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະວິດຊາ ແລະດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ຕົກຢູ່ໃນອະວິດຊາ

ເມື່ອທ່ານພຣະມະຫາໂກດຖິຕະຕອບແນວນີ້ແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ຖາມວ່າ ທ່ານໂກດຖິຕະ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດ ບຸກຄົນຈຶ່ງເປັນຜູ້ມີວິດຊາ

ທ່ານພຣະມະຫາໂກດຖິຕະຕອບວ່າ ທ່ານຜູ້ມີອາຍຸ ພຣະອະຣິຍະສາວົກໃນພຣະທຳວິໄນນີ້ ຜູ້ໄດ້ສະດັບ ຍ່ອມຮູ້ແຈ້ງຮູບ ຮູ້ແຈ້ງຄວາມເກີດແຫ່ງຮູບ ຮູ້ແຈ້ງຄວາມດັບແຫ່ງຮູບ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ຮູ້ແຈ້ງວິນຍານ ຮູ້ແຈ້ງ ຄວາມເກີດແຫ່ງວິນຍານ ຮູ້ແຈ້ງຄວາມດັບແຫ່ງວິນຍານ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ທ່ານຜູ້ມີອາຍຸ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ວິດຊາ ແລະດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງເປັນຜູ້ມີວິດຊາ

**ຕະຕິຍະໂກດຖິຕະສູດທີ ໑໐ ຈົບ**

**ອະວິດຊາວັກທີ ໒ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

| | |
|---|---|
| ໑. ສະມຸທະຍະທຳມະສູດ | ໔. ທຸຕິຍະສະມຸທະຍະທຳມະສູດ |
| ໓. ຕະຕິຍະສະມຸທະຍະທຳມະສູດ | ໔. ອັດສາທະສູດ |
| ໕. ທຸຕິຍະອັດສາທະສູດ | ໖. ສະມຸທະຍະສູດ |
| ໗. ທຸຕິຍະສະມຸທະຍະສູດ | ໘. ໂກດຖິຕະສູດ |
| ໙. ທຸຕິຍະໂກດຖິຕະສູດ | ໑໐. ຕະຕິຍະໂກດຖິຕະສູດ |

# ໔. ກຸກກຸລະວັກ

## ໝວດວ່າດ້ວຍສິ່ງທີ່ເປັນຂອງຮ້ອນ

## ໑. ກຸກຸລະສູດ

### ວ່າດ້ວຍສິ່ງທີ່ເປັນຂອງຮ້ອນ

[໑໓໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບເປັນຂອງຮ້ອນ ເວທະນາເປັນຂອງຮ້ອນ ສັນຍາເປັນຂອງຮ້ອນ ສັງຂານເປັນຂອງຮ້ອນ ວິນຍານເປັນຂອງຮ້ອນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ກຸກຸລະສູດທີ ໑ ຈົບ**

## ໔. ອະນິດຈະສູດ

### ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໑໓໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະໃນສິ່ງນັ້ນ ກໍອັນໃດນໍ? ບໍ່ທ່ຽງ

ຄື ຮູບບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະໃນຮູບນັ້ນ
 ເວທະນາບໍ່ທ່ຽງ ຯລຯ
 ສັນຍາ ຯລຯ

ສັງຂານ ฯลฯ
ວິນຍານບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະໃນວິນຍານນັ້ນ

ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະໃນສິ່ງນັ້ນ

**ອະນິດຈະສູດທີ ໔ ຈົບ**

# ໓. ທຸຕິຍະອະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງ ສູດທີ ໔

[໑໓໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະຣາຄະໃນສິ່ງນັ້ນ ກໍອັນໃດນໍ? ບໍ່ທ່ຽງ

ຄື ຮູບບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະຣາຄະໃນຮູບນັ້ນ
ເວທະນາບໍ່ທ່ຽງ ฯลฯ
ສັນຍາ ฯลฯ
ສັງຂານ ฯลฯ
ວິນຍານບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະຣາຄະໃນວິນຍານນັ້ນ

ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະຣາຄະໃນສິ່ງນັ້ນ

**ທຸຕິຍະອະນິດຈະສູດທີ ໓ ຈົບ**

# ໔. ຕະຕິຍະອະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງ ສູດທີ ໓

[໑໓໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນສິ່ງນັ້ນ ກໍອັນໃດນໍ? ບໍ່ທ່ຽງ

ຄື ຮູບບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນຮູບນັ້ນ

ເວທະນາບໍ່ທ່ຽງ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະຣາຄະໃນວິນຍານນັ້ນ

ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

**ຕະຕິຍະອະນິດຈະສູດທີ ໔ ຈົບ**

# ໕. ທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກ

[໑໔໐] ເລື້ອງເກີດຂື້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະໃນສິ່ງນັ້ນ ຯລຯ

ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະໃນສິ່ງນັ້ນ

**ທຸກຂະສູດທີ ໕ ຈົບ**

# ໖. ທຸຕິຍະທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກ ສູດທີ ໒

[໑໔໑] ເລື້ອງເກີດຂື້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະຣາຄະໃນສິ່ງນັ້ນ ຯລຯ

ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍ ເພິ່ງລະຣາຄະໃນສິ່ງນັ້ນ

**ທຸຕິຍະທຸກຂະສູດທີ ໖ ຈົບ**

## ໗. ຕະຕິຍະທຸກຂະສູດ

### ວ່າດ້ວຍສິ່ງທີ່ເປັນທຸກ ສູດທີ ໓

[໑໔໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນສິ່ງນັ້ນ ຯລຯ

ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

**ຕະຕິຍະທຸກຂະສູດທີ ໗ ຈົບ**

## ໘. ອະນັດຕະສູດ

### ວ່າດ້ວຍສິ່ງທີ່ເປັນອະນັດຕາ

[໑໔໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະໃນສິ່ງນັ້ນ ກໍອັນໃດນໍ? ເປັນອະນັດຕາ

ຄື ຮູບເປັນອະນັດຕາ ທ່ານທັງຫຼາຍ ເພິ່ງລະສັນທະໃນຮູບນັ້ນ
ເວທະນາເປັນອະນັດຕາ ຯລຯ
ສັນຍາ ຯລຯ
ສັງຂານ ຯລຯ
ວິນຍານເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະໃນວິນຍານນັ້ນ

ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍ ເພິ່ງລະສັນທະໃນສິ່ງນັ້ນ

**ອະນັດຕະສູດທີ ໘ ຈົບ**

# ໙. ທຸຕິຍະອະນັດຕະສູດ

## ວ່າດ້ວຍສິ່ງທີ່ເປັນອະນັດຕາ ສູດທີ ໔

[໑໔໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະຣາຄະໃນສິ່ງນັ້ນ ກໍອັນໃດນໍ? ເປັນອະນັດຕາ

ຄື ຮູບເປັນອະນັດຕາ ທ່ານທັງຫຼາຍ ເພິ່ງລະຣາຄະໃນຮູບນັ້ນ

ເວທະນາເປັນອະນັດຕາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານເປັນອະນັດຕາ ທ່ານທັງຫຼາຍເພິ່ງລະຣາຄະໃນວິນຍານນັ້ນ

ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະຣາຄະໃນສິ່ງນັ້ນ

**ທຸຕິຍະອະນັດຕະສູດທີ ໙ ຈົບ**

# ໑໐. ຕະຕິຍະອະນັດຕະສູດ

## ວ່າດ້ວຍສິ່ງທີ່ເປັນອະນັດຕາ ສູດທີ ໓

[໑໔໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນສິ່ງນັ້ນ ກໍອັນໃດນໍ? ເປັນອະນັດຕາ

ຄື ຮູບເປັນອະນັດຕາ ທ່ານທັງຫຼາຍ ເພິ່ງລະສັນທະຣາຄະໃນຮູບນັ້ນ

ເວທະນາເປັນອະນັດຕາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານເປັນອະນັດຕາ ທ່ານທັງຫຼາຍ ເພິ່ງລະສັນທະຣາຄະໃນວິນຍານນັ້ນ

ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນສິ່ງນັ້ນ

**ຕະຕິຍະອະນັດຕະສູດທີ ໑໐ ຈົບ**

# ໑໑. ນິບພິທາພະຫຸລະສູດ

## ວ່າດ້ວຍຜູ້ຫຼາຍດ້ວຍຄວາມເບື່ອໜ່າຍ

[໑໔໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຸນລະບຸດຜູ້ບວດດ້ວຍສັດທາ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ຫຼາຍດ້ວຍຄວາມເບື່ອໜ່າຍໃນຣູບຢູ່ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເພິ່ງເປັນຜູ້ຫຼາຍດ້ວຍຄວາມເບື່ອໜ່າຍໃນວິນຍານຢູ່ ຜູ້ໃດຫຼາຍດ້ວຍຄວາມເບື່ອໜ່າຍໃນຣູບຢູ່ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຫຼາຍດ້ວຍຄວາມເບື່ອໜ່າຍໃນວິນຍານຢູ່ ກໍຈະກຳນົດຮູ້ຣູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ຜູ້ນັ້ນເມື່ອກຳນົດຮູ້ຣູບ ກຳນົດຮູ້ເວທະນາ ກຳນົດຮູ້ສັນຍາ ກຳນົດຮູ້ສັງຂານ ກຳນົດຮູ້ວິນຍານ ຍ່ອມພົ້ນຈາກຣູບ ຍ່ອມພົ້ນຈາກເວທະນາ ຍ່ອມພົ້ນຈາກສັນຍາ ຍ່ອມພົ້ນຈາກສັງຂານ ຍ່ອມພົ້ນຈາກວິນຍານ ເຮົາກ່າວວ່າ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ແລະ ຍ່ອມພົ້ນຈາກທຸກ

**ນິບພິທາພະຫຸລະສູດທີ ໑໑ ຈົບ**

# ໑໔. ອະນິດຈານຸປັດສີສູດ

## ວ່າດ້ວຍຜູ້ພິຈາລະນາເຫັນຄວາມບໍ່ທ່ຽງ

[໑໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຸນລະບຸດຜູ້ບວດດ້ວຍສັດທາ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງໃນຣູບຢູ່ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເພິ່ງເປັນຜູ້ພິຈາລະນາເຫັນຄວາມບໍ່ທ່ຽງໃນວິນຍານຢູ່ ຯລຯ ເຮົາກ່າວວ່າ ຯລຯ ແລະ ຍ່ອມພົ້ນຈາກທຸກ

**ອະນິດຈານຸປັດສີສູດທີ ໑໔ ຈົບ**

# ໑໓. ທຸກຂານຸປັດສີສູດ

## ວ່າດ້ວຍຜູ້ພິຈາລະນາເຫັນທຸກ

[໑໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຸນລະບຸດຜູ້ບວດດ້ວຍສັດທາ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ພິຈາລະນາເຫັນທຸກໃນຮູບຢູ່ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເພິ່ງເປັນຜູ້ພິຈາລະນາເຫັນທຸກໃນວິນຍານຢູ່ ຯລຯ ເຮົາກ່າວວ່າ ຯລຯ ແລະ ຍ່ອມພົ້ນຈາກທຸກ

**ທຸກຂານຸປັດສີສູດທີ ໑໓ ຈົບ**

# ໑໔. ອະນັດຕານຸປັດສີສູດ

## ວ່າດ້ວຍຜູ້ພິຈາລະນາເຫັນອະນັດຕາ

[໑໔໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຸນລະບຸດຜູ້ບວດດ້ວຍສັດທາ ມີທຳອັນເໝາະສົມ ຄື ເພິ່ງເປັນຜູ້ພິຈາລະນາເຫັນອະນັດຕາໃນຮູບຢູ່ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ເພິ່ງເປັນຜູ້ພິຈາລະນາເຫັນອະນັດຕາໃນວິນຍານຢູ່ ຜູ້ໃດພິຈາລະນາເຫັນອະນັດຕາໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ພິຈາລະນາເຫັນອະນັດຕາໃນວິນຍານຢູ່ ກໍຈະກຳນົດຮູ້ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ກຳນົດຮູ້ວິນຍານ ຜູ້ນັ້ນເມື່ອກຳນົດຮູ້ຮູບ ກຳນົດຮູ້ເວທະນາ ກຳນົດຮູ້ສັນຍາ ກຳນົດຮູ້ສັງຂານ ກຳນົດຮູ້ວິນຍານ ຍ່ອມພົ້ນຈາກຮູບ ຍ່ອມພົ້ນຈາກເວທະນາ ຍ່ອມພົ້ນຈາກສັນຍາ ຍ່ອມພົ້ນຈາກສັງຂານ ຍ່ອມພົ້ນຈາກວິນຍານ ເຮົາກ່າວວ່າ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ແລະ ຍ່ອມພົ້ນຈາກທຸກ

**ອະນັດຕານຸປັດສີສູດທີ ໑໔ ຈົບ**

**ກຸກກຸລະວັກທີ ໔ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ກຸກຸລະສູດ
໒. ທຸຕິຍະອະນິດຈະສູດ
໓. ທຸກຂະສູດ
໔. ຕະຕິຍະທຸກຂະສູດ
໕. ທຸຕິຍະອະນັດຕະສູດ
໖. ອະນິດຈະສູດ
໗. ຕະຕິຍະອະນິດຈະສູດ
໘. ທຸຕິຍະທຸກຂະສູດ
໙. ອະນັດຕະສູດ
໑໐. ຕະຕິຍະອະນັດຕະສູດ
໑໑. ນິບພິທາພະຫຸລະສູດ
໑໒. ອະນິດຈານຸປັດສີສູດ
໑໓. ທຸກຂານຸປັດສີສູດ
໑໔. ອະນັດຕານຸປັດສີສູດ

# ໕. ທິດຖິວັກ

## ໝວດວ່າດ້ວຍທິດຖິ

## ໑. ອັດຊັດຕະສູດ

### ວ່າດ້ວຍສຸກແລະທຸກໃນພາຍໃນ

[໑໕໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນ
ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ
ເມື່ອມີວິນຍານ ຍ້ອນອາໄສວິນຍານ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ສຸກແລະທຸກໃນພາຍໃນຈະເພິ່ງເກີດຂຶ້ນໄດ້ບໍ?
ບໍ່ໄດ້ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ສຸກແລະທຸກໃນພາຍໃນຈະເພິ່ງເກີດຂຶ້ນໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕະສູດທີ ໑ ຈົບ**

# ໘. ເອຕັງມະມະສູດ

## ວ່າດ້ວຍການພິຈາລະນາເຫັນວ່ານັ້ນຂອງເຮົາ

[໑໕໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ບຸກຄົນຈຶ່ງພິຈາລະນາເຫັນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຍຶດໝັ້ນຮູບ ບຸກຄົນຈຶ່ງພິຈາລະນາເຫັນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຍຶດໝັ້ນວິນຍານ ບຸກຄົນຈຶ່ງພິຈາລະນາເຫັນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ບຸກຄົນຈະເພິ່ງພິຈາລະນາເຫັນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ບຸກຄົນຈະເພິ່ງພິຈາລະນາເຫັນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາໄດ້ບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ເອຕັງມະມະສູດທີ ໘ ຈົບ**

# ໙. ໂສອັດຕາສູດ

## ວ່າດ້ວຍທິດຖິວ່າອັດຕາກັບໂລກເປັນແນວດຽວກັນ

[໑໕໘] ເລື້ອງເກີດຂື້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວ ຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວ ຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ

ເມື່ອມີເວທະນາ ຯລຯ

ເມື່ອມີສັນຍາ ฯลฯ
ເມື່ອມີສັງຂານ ฯลฯ

ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວ ຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນບໍ່ວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວ ຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ
ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນບໍ່ວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວ ຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯลฯ ຮູ້ແຈ້ງວ່າ ฯลฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ໂສອັດຕາສູດທີ ໓ ຈົບ**

# ໔. ໂນຈະເມສິຍາສູດ

## ວ່າດ້ວຍທິດຖິວ່າເຮົາບໍ່ເພິ່ງມີ

[໑໕໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ

ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ເມື່ອມີເວທະນາ ฯລฯ
ເມື່ອມີສັນຍາ ฯລฯ
ເມື່ອມີສັງຂານ ฯລฯ

ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ ຈຶ່ງເກີດຂຶ້ນວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ
ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ໂນຈະເມສິຍາສູດທີ ໔ ຈົບ**

# ໕. ມິດສາທິດຖິສູດ

## ວ່າດ້ວຍມິດສາທິດຖິ

[໑໕໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ມິດສາທິດຖິ (ເຫັນຜິດ) ຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຍຶດໝັ້ນຮູບ ມິດສາທິດຖິຈຶ່ງເກີດຂຶ້ນ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຍຶດໝັ້ນວິນຍານ ມິດສາທິດຖິຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ฯລฯ ຍ້ອນບໍ່ອາໄສສິ່ງນັ້ນ ມິດສາທິດຖິຈະເພິ່ງເກີດຂຶ້ນໄດ້ບໍ?
ບໍ່ໄດ້ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ອາໄສສິ່ງນັ້ນ ມິດສາທິດຖິຈະເພິ່ງເກີດຂຶ້ນບໍ
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ມິດສາທິດຖິສູດທີ ໕ ຈົບ**

# ໖. ສັກກາຍະທິດຖິສູດ

## ວ່າດ້ວຍສັກກາຍະທິດຖິ

[໑໕໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ສັກກາຍະທິດຖິ (ຄວາມເຫັນວ່າເປັນໂຕຂອງຕົນ) ຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຍຶດໝັ້ນຮູບ ສັກກາຍະທິດຖິຈຶ່ງເກີດຂຶ້ນ

ເມື່ອມີເວທະນາ ฯລฯ

ເມື່ອມີສັນຍາ ฯລฯ
ເມື່ອມີສັງຂານ ฯລฯ
ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຍຶດໝັ້ນວິນຍານ ສັກກາຍະທິດຖິຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ฯລฯ ຍ້ອນບໍ່ອາໄສສິ່ງນັ້ນ ສັກກາຍະທິດຖິຈະເພິ່ງເກີດຂຶ້ນໄດ້ບໍ?
ບໍ່ໄດ້ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ฯລฯ ຍ້ອນບໍ່ອາໄສສິ່ງນັ້ນ ສັກກາຍະທິດຖິຈະເພິ່ງເກີດຂຶ້ນບໍ
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ສັກກາຍະທິດຖິສູດທີ ໖ ຈົບ**

# ໗. ອັດຕານຸທິດຖິສູດ

## ວ່າດ້ວຍອັດຕານຸທິດຖິ

[໑໕໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ອັດຕານຸທິດຖິ (ຄວາມເຫັນວ່າເປັນອັດຕາ) ຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຍຶດໝັ້ນຮູບ ອັດຕານຸທິດຖິຈຶ່ງເກີດຂຶ້ນ

ເມື່ອມີເວທະນາ ฯລฯ
ເມື່ອມີສັນຍາ ฯລฯ

ເມື່ອມີສັງຂານ ฯລฯ
ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຍຶດໝັ້ນວິນຍານ ອັດຕານຸທິດຖິຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ฯລฯ ຍ້ອນບໍ່ອາໄສສິ່ງນັ້ນ ອັຕຕານຸທິດຖິຈະເພິ່ງເກີດຂຶ້ນໄດ້ບໍ?
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ??
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ฯລฯ ຍ້ອນບໍ່ອາໄສສິ່ງນັ້ນ ອັດຕານຸທິດຖິຈະເພິ່ງເກີດຂຶ້ນໄດ້ບໍ?
ບໍ່ແມ່ນໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຕານຸທິດຖິສູດທີ ໗ ຈົບ**

## ໘. ອະພິນິເວສະສູດ

### ວ່າດ້ວຍຄວາມຍຶດໝັ້ນ

[໑໕໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ຄວາມພົວພັນດ້ວຍສັງໂຍດ ແລະຄວາມຍຶດໝັ້ນຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຍຶດໝັ້ນຮູບ ຄວາມພົວພັນດ້ວຍສັງໂຍດ ແລະຄວາມຍຶດໝັ້ນຈຶ່ງເກີດຂຶ້ນ

ເມື່ອມີເວທະນາ ฯລฯ
ເມື່ອມີສັນຍາ ฯລฯ

ເມື່ອມີສັງຂານ ฯลฯ

ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຍຶດໝັ້ນວິນຍານ ຄວາມພົວພັນດ້ວຍສັງໂຍດ ແລະຄວາມຍຶດໝັ້ນຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ฯลฯ ຍ້ອນບໍ່ອາໄສສິ່ງນັ້ນ ຄວາມພົວພັນດ້ວຍສັງໂຍດແລະຄວາມຍຶດໝັ້ນຈະເພິ່ງເກີດຂຶ້ນໄດ້ບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ฯลฯ ຍ້ອນບໍ່ອາໄສສິ່ງນັ້ນ ຄວາມພົວພັນດ້ວຍສັງໂຍດແລະຄວາມຍຶດໝັ້ນຈະເພິ່ງເກີດຂຶ້ນໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯลฯ ຮູ້ແຈ້ງວ່າ ฯลฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະພິນິເວສະສູດທີ ໗ ຈົບ**

# ໘. ທຸຕິຍະອະພິນິເວສະສູດ

## ວ່າດ້ວຍຄວາມຍຶດໝັ້ນ ສູດທີ ໘

[໑໕໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນອາໄສອັນໃດ ຍ້ອນຍຶດໝັ້ນອັນໃດ ຄວາມພົວພັນ ແລະຄວາມໝົກມຸ້ນດ້ວຍສັງໂຍດ ແລະຄວາມຍຶດໝັ້ນຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯลฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນອາໄສຮູບ ຍ້ອນຢຶດໝັ້ນຮູບ ຄວາມພົວພັນແລະຄວາມໝົກມຸ້ນດ້ວຍສັງໂຍດ ແລະຄວາມຢຶດໝັ້ນຈຶ່ງເກີດຂຶ້ນ

ເມື່ອມີ ເວທະນາ ฯລฯ
ເມື່ອມີ ສັນຍາ ฯລฯ
ເມື່ອມີ ສັງຂານ ฯລฯ

ເມື່ອມີວິນຍານ ຍ້ອນອາໄສວິນຍານ ຍ້ອນຢຶດໝັ້ນວິນຍານ ຄວາມພົວພັນແລະຄວາມໝົກມຸ້ນດ້ວຍສັງໂຍດ ແລະຄວາມຢຶດໝັ້ນຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ฯລฯ ຍ້ອນບໍ່ອາໄສສິ່ງນັ້ນ ຄວາມພົວພັນ ແລະຄວາມໝົກມຸ້ນດ້ວຍສັງໂຍດ ແລະຄວາມຢຶດໝັ້ນຈະເພິ່ງເກີດຂຶ້ນໄດ້ບໍ?
ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸຕິຍະອະພິນິເວສະສູດທີ ໙ ຈົບ**

## ໑໐. ອານັນທະສູດ

### ວ່າດ້ວຍພຣະອານົນ

[໑໕໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ฯລฯ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ທ່ານຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນ ເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ອານົນ ຍ້ອນເຫດນັ້ນ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນທ່ານເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ແນວໃດແນວໜຶ່ງ ຯລຯ
ສັນຍາ ແນວໃດແນວໜຶ່ງ ຯລຯ
ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນທ່ານເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ອານົນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດ

ກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອານັນທະສູດທີ ໑໐ ຈົບ**

**ທິດຖິວັກທີ ໕ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

໑. ອັດຊັດຕະສູດ
໒. ໂສອັດຕາສູດ
໕. ມິດສາທິດຖິສູດ
໗. ອັດຕານຸທິດຖິສູດ
໙. ທຸຕິຍະອະພິນິເວສະສູດ
໔. ເອຕັງມະມະສູດ
໔. ໂນຈະເມສິຍາສູດ
໖. ສັກກາຍະທິດຖິສູດ
໘. ອະພິນິເວສະສູດ
໑໐. ອານັນທະສູດ

**ອຸປະຣິປັນນາດ ຈົບບໍລິບູນ**

## ລວມວັກທີ່ມີໃນອຸປະຣິປັນນາດນີ້ ຄື

໑. ອັນຕະວັກ
໒. ອະວິດຊາວັກ
໕. ທິດຖິວັກ
໔. ທຳມະກະຖິກະວັກ
໔. ກຸກກຸລະວັກ

## ລວມ ໕ ວັກ ຮຽກວ່າ ຕະຕິຍະປັນນາດ

**ຂັນທະສັງຍຸດ ຈົບ**

# ໔. ຣາທະສັງຍຸດ

## ໑. ປະຖົມວັກ

### ໝວດທີ ໑

### ໑. ມາຣະສູດ

### ວ່າດ້ວຍມານ

[໑໘໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ມານ ມານ ດ້ວຍເຫດພຽງທໍ່ໃດນໍ? ພຣະອົງຈຶ່ງຕັດວ່າ ມານ

ພຣະຜູ້ມີພຣະພາກເຈົ້າ ຕັດຕອບວ່າ ຣາທະ ເມື່ອມີຮູບ ຈຶ່ງມີມານ ມີຜູ້ເຮັດໃຫ້ຕາຍຫຼືມີຜູ້ຕາຍ ຍ້ອນແນວນັ້ນ ທ່ານຈຶ່ງເຫັນຮູບວ່າ ເປັນມານ ເປັນຜູ້ເຮັດໃຫ້ຕາຍ ເປັນຜູ້ຕາຍ ເປັນພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນຂອງລຳບາກ ເປັນເຫດເກີດແຫ່ງຂອງຄວາມລຳບາກ ບຸກຄົນເຫຼົ່າໃດເຫັນຮູບນັ້ນແນວນີ້ ບຸກຄົນເຫຼົ່ານັ້ນຊື່ວ່າ ຍ່ອມເຫັນຖືກ

ເມື່ອມີ ເວທະນາ ฯລฯ
ເມື່ອມີ ສັນຍາ ฯລฯ
ເມື່ອມີ ສັງຂານ ฯລฯ

ເມື່ອມີວິນຍານ ຈຶ່ງມີມານ ມີຜູ້ເຮັດໃຫ້ຕາຍ ຫຼືມີຜູ້ຕາຍ ຍ້ອນແນວນັ້ນ ທ່ານຈຶ່ງເຫັນວິນຍານວ່າ ເປັນມານ ເປັນຜູ້ເຮັດໃຫ້ຕາຍ ເປັນຜູ້ຕາຍ ເປັນພະຍາດ ເປັນຄືຫົວຝີ ເປັນຄືລູກສອນ ເປັນຂອງລຳບາກ ເປັນເຫດເກີດແຫ່ງຂອງລຳບາກ ບຸກຄົນເຫຼົ່າໃດເຫັນວິນຍານນັ້ນແນວນີ້ ບຸກຄົນເຫຼົ່ານັ້ນຊື່ວ່າຍ່ອມເຫັນຖືກ

ກໍຄວາມເຫັນຖືກມີປະໂຫຍດແນວໃດນໍ? ຂ້ານ້ອຍ

ຣາທະ ຄວາມເຫັນຖືກມີປະໂຫຍດເຮັດໃຫ້ເບື່ອໜ່າຍ
ກໍຄວາມເບື່ອໜ່າຍມີປະໂຫຍດແນວໃດນໍ? ຂ້ານ້ອຍ

ຄວາມເບື່ອໜ່າຍມີປະໂຫຍດເຮັດໃຫ້ຄາຍກຳໜັດ
ກໍຄວາມຄາຍກຳໜັດມີປະໂຫຍດແນວໃດນໍ? ຂ້ານ້ອຍ

ຄວາມຄາຍກຳໜັດມີປະໂຫຍດເຮັດໃຫ້ລຸດພົ້ນ
ກໍຄວາມລຸດພົ້ນມີປະໂຫຍດແນວໃດນໍ? ຂ້ານ້ອຍ

ຄວາມລຸດພົ້ນມີປະໂຫຍດເຮັດໃຫ້ນິບພານ
ກໍນິບພານນໍມີປະໂຫຍດແນວໃດນໍ? ຂ້ານ້ອຍ

ຣາທະ ທ່ານຖາມຫຼາຍເກີນໄປແລ້ວ ທ່ານບໍ່ກຳນົດຂອບເຂດຂອງບັນຫາ ຍ້ອນກຸນລະບຸດຢູ່ປະພຶດພົມມະຈັນທີ່ຢັ່ງລົງສູ່ນິບພານ ມີນິບພານເປັນຈຸດມຸ້ງໝາຍ ມີນິບພານເປັນບ່ອນສຸດ

**ມາຣະສູດທີ ໑ ຈົບ**

# ໘. ສັດຕະສູດ

## ວ່າດ້ວຍສັດ

[໑໖໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສັດ ສັດ ດ້ວຍເຫດພຽງທໍ່ໃດນໍ ພຣະອົງຈຶ່ງຕັດວ່າ ສັດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ບຸກຄົນຜູ້ຂ້ອງຕິດຢູ່ໃນຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກໃນຮູບ ຍ້ອນແນວນັ້ນ ເຮົາຈຶ່ງກ່າວວ່າ ສັດ ฯລฯ ໃນເວທະນາ ฯລฯ ໃນສັນຍາ ฯລฯ ໃນສັງຂານ ฯລฯ ບຸກຄົນຜູ້ຂ້ອງຕິດຢູ່ໃນຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກໃນວິນຍານ ຍ້ອນແນວນັ້ນ ເຮົາຈຶ່ງກ່າວວ່າ ສັດ

ຣາທະ ປຽບເໝືອນ ພວກເດັກຊາຍຫຼືເດັກຍິງຫຼິ້ນເຮືອນຊາຍຢູ່ ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມທະຍານຢາກໃນຝຸ່ນເຫຼົ່ານັ້ນຢູ່ພຽງໃດ ພວກເຂົາກໍອາໄລ ຍາກຫຼິ້ນ ຫວງແຫນ ຍຶດຖືເຮືອນຊາຍທັງຫຼາຍຢູ່ພຽງນັ້ນ

ແຕ່ເມື່ອໃດ ພວກເດັກຊາຍຫຼືເດັກຍິງ ເປັນຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມທະຍານຢາກໃນເຮືອນຊາຍເຫຼົ່ານັ້ນ ເມື່ອນັ້ນ ພວກເຂົາຍ່ອມຮື້ ມ້າງ ທຳລາຍ ເຮັດເຮືອນຊາຍເຫຼົ່ານັ້ນ ຫຼິ້ນບໍ່ໄດ້ດ້ວຍມືແລະຕີນ ແມ່ນສັນໃດ ແມ່ນທ່ານທັງຫຼາຍ ກໍຄືກັນສັນນັ້ນ ຈົ່ງຮື້ ແຍກ ກະຈາຍອອກ ເຮັດຮູບໃຫ້ຍິນດີບໍ່ໄດ້ ປະຕິບັດເພື່ອຄວາມໝົດຕັນຫາ ທ່ານທັງຫຼາຍຈົ່ງຮື້ ແຍກ ກະຈາຍອອກ ເຮັດເວທະນາໃຫ້ຍິນດີບໍ່ໄດ້ ປະຕິບັດເພື່ອຄວາມໝົດຕັນຫາ ຯລຯ ສັນຍາ ຯລຯ ທ່ານທັງຫຼາຍຈົ່ງຮື້ ແຍກ ກະຈາຍອອກ ເຮັດສັງຂານໃຫ້ຍິນດີບໍ່ໄດ້ ປະຕິບັດເພື່ອໝົດຕັນຫາ ທ່ານທັງຫຼາຍຈົ່ງຮື້ ແຍກ ກະຈາຍອອກ ເຮັດວິນຍານໃຫ້ຍິນດີບໍ່ໄດ້ ປະຕິບັດເພື່ອຄວາມໝົດຕັນຫາ ຣາທະ ກໍຄວາມໝົດຕັນຫາ ຈັດເປັນນິບພານ

**ສັດຕະສູດທີ ໘ ຈົບ**

# ໙. ພະວະເນດຕິສູດ

## ວ່າດ້ວຍກິເລດເປັນເຫດນຳໄປສູ່ພົບ

[໑໙໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ກິເລດເປັນເຫດນຳໄປສູ່ພົບ ກິເລດເປັນເຫດນຳໄປສູ່ພົບເປັນແນວໃດ? ຄວາມດັບກິເລດເປັນເຫດນຳໄປສູ່ພົບເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍ ແລະຄວາມຍຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນແລະນອນຈົມໃນຮູບ ນີ້ເຮົາກ່າວວ່າ ກິເລດເປັນເຫດນຳໄປສູ່ພົບ ຍ້ອນດັບກິເລດເຫຼົ່ານັ້ນ ຈຶ່ງຈັດເປັນຄວາມດັບກິເລດເປັນເຫດນຳໄປສູ່ພົບ

ຄວາມພໍໃຈ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍ ແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນວິນຍານ ນີ້ເຮົາກ່າວວ່າ ກິເລດເປັນເຫດນຳໄປສູ່ພົບ ຍ້ອນດັບກິເລດເຫຼົ່ານັ້ນ ຈຶ່ງຈັດເປັນຄວາມດັບກິເລດເປັນເຫດນຳໄປສູ່ພົບ

**ພະວະເນດຕິສູດທີ ໙ ຈົບ**

# ໔. ປະຣິນເຍີຍຍະສູດ

## ວ່າດ້ວຍທຳທີ່ຄວນກຳນົດຮູ້

[໑໗໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ ວ່າ

ຣາທະ ເຮົາຈັກສະແດງທຳທີ່ຄວນກຳນົດຮູ້ ຄວາມກຳນົດຮູ້ ແລະບຸກຄົນຜູ້ກຳນົດຮູ້ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ທ່ານພຣະຣາທະຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດ ວ່າ

ຣາທະ ທຳທີ່ຄວນກຳນົດຮູ້ ເປັນແນວໃດ?

ຄື ຮູບເປັນທຳທີ່ຄວນກຳນົດຮູ້ ເວທະນາເປັນທຳທີ່ຄວນກຳນົດຮູ້ ສັນຍາເປັນທຳທີ່ຄວນກຳນົດຮູ້ ສັງຂານເປັນທຳທີ່ຄວນກຳນົດຮູ້ ວິນຍານເປັນທຳທີ່ຄວນກຳນົດຮູ້ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ຄວນກຳນົດຮູ້

ຄວາມກຳນົດຮູ້ ເປັນແນວໃດ?
ຄື ຄວາມໝົດຣາຄະ ຄວາມໝົດໂທສະ ຄວາມໝົດໂມຫະ
ນີ້ຮຽກວ່າ ຄວາມກຳນົດຮູ້

ບຸກຄົນຜູ້ກຳນົດຮູ້ ເປັນແນວໃດ?
ຄື ຄວນກ່າວໄດ້ວ່າ ບຸກຄົນຜູ້ກຳນົດຮູ້ນັ້ນ ຄືພຣະອະຣະຫັນ ໄດ້ແກ່ ທ່ານຜູ້ມີຊື່ແນວນີ້ ມີໂຄດແນວນີ້
ນີ້ຮຽກວ່າ ບຸກຄົນຜູ້ກຳນົດຮູ້

**ປະຣິນເຍີຍຍະສູດທີ ໔ ຈົບ**

# ໕. ສະມະນະສູດ

## ວ່າດ້ວຍສະມະນະ

[໑໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະຣາທະຜູ້ນັ່ງຢູ່ບ່ອນທີ່ສົມຄວນ ດັ່ງນີ້ວ່າ ຣາທະອຸປາທານຂັນ ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ກໍສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ກໍບໍ່ໄດ້ຮັບຍ້ອງຍໍວ່າເປັນສະມະນະໃນໝູ່ສະມະນະ ບໍໄດ້ຮັບຍ້ອງຍໍວ່າເປັນພາມໃນໝູ່ພາມ ອັນໜຶ່ງ ທ່ານເຫຼົ່ານັ້ນຈະເຮັດໃຫ້ແຈ້ງເຊິ່ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃປັດຈຸບັນບໍ່ໄດ້

ຣາທະ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຄຸນ ໂທດ ແລະ ເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ກໍໄດ້ຮັບຍ້ອງຍໍວ່າເປັນສະມະນະໃນໝູ່ສະມະນະ ຫຼື ໄດ້ຮັບຍ້ອງຍໍວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍຈະເຮັດໃຫ້ແຈ້ງເຊິ່ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້

**ສະມະນະສູດທີ ໕ ຈົບ**

# ໖. ທຸຕິຍະສະມະນະສູດ

## ວ່າດ້ວຍສະມະນະ ສູດທີ ໒

[໑໖໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະຣາທະ ຜູ້ນັ່ງຢູ່ບ່ອນທີ່ສົມຄວນດັ່ງນີ້ວ່າ ຣາທະ

ອຸປາທານຂັນ ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ໒. ເວທະນູປາທານະຂັນ
໓. ສັນຍູປາທານະຂັນ ໔. ສັງຂາຣູປາທານະຂັນ
໕. ວິນຍານູປາທານະຂັນ

ຣາທະ ກໍສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ຯລຯ ກໍຈະເຮັດໃຫ້ແຈ້ງ ຯລຯ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນໄດ້

**ທຸຕິຍະສະມະນະສູດທີ ໖ ຈົບ**

# ໗. ໂສຕາປັນນະສູດ

## ວ່າດ້ວຍພຣະໂສດາບັນ

[໑໖໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະຣາທະຜູ້ນັ່ງຢູ່ບ່ອນທີ່ສົມຄວນ ດັ່ງນີ້ວ່າ ຣາທະ ອຸປາທານຂັນ ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຣູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຍ້ອນເຫດທີ່ອະຣິຍະສາວົກຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ

ຣາທະ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ໂສຕາປັນນະສູດທີ ໗ ຈົບ**

# ໘. ອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນ

[໑໖໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະຣາທະ ຜູ້ນັ່ງຢູ່ບ່ອນທີ່ສົມຄວນ ດັ່ງນີ້ວ່າ ຣາທະ

ອຸປາທານຂັນ ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່? ຄື

໑. ຮູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ຍ້ອນເຫດທີ່ພິກຂຸຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອຸປາທານຂັນ ໕ ປະການນີ້ຕາມຄວາມເປັນຈິງ ຈຶ່ງເປັນຜູ້ລຸດພົ້ນຍ້ອນບໍ່ຖືໝັ້ນ

ຣາທະ ນີ້ເຮົາຮຽກວ່າ ເປັນພິກຂຸອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ໝົດພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ

**ອະຣະຫັນຕະສູດທີ ໗ ຈົບ**

# ໙. ສັນທະຣາຄະສູດ

## ວ່າດ້ວຍຄວາມພໍໃຈແລະຄວາມກຳໜັດ

[໑໖໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະຣາທະຜູ້ນັ່ງຢູ່ບ່ອນທີ່ສົມຄວນ ດັ່ງນີ້ວ່າ ຣາທະ ທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກໃນຮູບ ເມື່ອເປັນແບວນີ້ ຮູບນັ້ນ ຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກໃນເວທະນາ ເມື່ອເປັນແບວນີ້ ເວທະນານັ້ນກໍຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຯລຯ ໃນສັນຍາ ຯລຯ

ທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກໃນສັງຂານ ເມື່ອເປັນແບວນີ້ ສັງຂານເຫຼົ່ານັ້ນກໍຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນ ຕໍ່ໄປບໍ່ໄດ້

ທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກໃນວິນຍານ ເມື່ອເປັນແນວນີ້ ວິນຍານນັ້ນກໍຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

**ສັນທະຣາຄະສູດທີ ໙ ຈົບ**

# ໑໐. ທຸຕິຍະສັນທະຣາຄະສູດ

## ວ່າດ້ວຍຄວາມພໍໃຈແລະຄວາມກຳໜັດ ສູດທີ ໔

[໑໙໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະຣາທະຜູ້ນັ່ງຢູ່ບ່ອນທີ່ສົມຄວນດັ່ງນີ້ວ່າ ຣາທະທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນ ອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ ນແລະນອນຈົມໃນຮູບ ເມື່ອເປັນແນວນີ້ ຮູບນັ້ນກໍຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນເວທະນາ ເມື່ອເປັນແນວນີ້ ເວທະນານັ້ນກໍຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຯລຯ ໃນສັນຍາ ຯລຯ

ທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນສັງຂານ ເມື່ອເປັນແນວນີ້ ສັງຂານນັ້ນກໍຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ທ່ານຈົ່ງລະຄວາມພໍໃຈ ຄວາມກຳໜັດ ຄວາມເພີດເພີນ ຄວາມທະຍານຢາກ ອຸບາຍແລະຄວາມຍຶດໝັ້ນອັນເປັນເຫດທີ່ໃຈເຂົ້າໄປຕັ້ງໝັ້ນຖືໝັ້ນ ແລະນອນຈົມໃນວິນຍານ ເມື່ອເປັນແນວນີ້ ວິນຍານນັ້ນກໍຈັກເປັນອັນທ່ານລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

**ທຸຕິຍະສັນທະຣາຄະສູດທີ ໑໐ ຈົບ**

**ປະຖົມວັກ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ມາຣະສູດ

໒. ພະວະເນດຕິສູດ

໓. ສະມະນະສູດ

໔. ໂສຕາປັນນະສູດ

໕. ສັນທະຣາຄະສູດ

໖. ສັດຕະສູດ

໗. ປະຣິນເຍີຍຍະສູດ

໘. ທຸຕິຍະສະມະນະສູດ

໙. ອະຣະຫັນຕະສູດ

໑໐. ທຸຕິຍະສັນທະຣາຄະສູດ

# ໔. ທຸຕິຍະວັກ

## ໝວດທີ ໔

# ໑. ມາຣະສູດ

## ວ່າດ້ວຍມານ

[໑໗໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ມານ ມານ ມານເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບເປັນມານ ເວທະນາເປັນມານ ສັນຍາເປັນມານ ສັງຂານເປັນມານ ວິນຍານເປັນມານ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ມາຣະສູດທີ ໑ ຈົບ**

# ໔. ມາຣະທຳມະສູດ

## ວ່າດ້ວຍທຳຂອງມານ

[໑໗໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ທຳຂອງມານ ທຳຂອງມານ ທຳຂອງມານເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບເປັນທຳຂອງມານ ເວທະນາເປັນທຳຂອງມານ ສັນຍາເປັນທຳຂອງມານ ສັງຂານເປັນທຳຂອງມານ ວິນຍານເປັນທຳຂອງມານ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ມາຣະທຳມະສູດທີ ໘ ຈົບ**

# ໙. ອະນິດຈະສູດ

## ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໑໗໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ບໍ່ທ່ຽງ ສິ່ງທີ່ບໍ່ທ່ຽງ ສິ່ງທີ່ບໍ່ທ່ຽງ ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບບໍ່ທ່ຽງ ເວທະນາບໍ່ທ່ຽງ ສັນຍາບໍ່ທ່ຽງ ສັງຂານບໍ່ທ່ຽງ ວິນຍານບໍ່ທ່ຽງ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະນິດຈະສູດທີ ໙ ຈົບ**

# ໑໐. ອະນິດຈະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມບໍ່ທ່ຽງເປັນທຳມະດາ

[໑໗໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ມີຄວາມບໍ່ທ່ຽງເປັນທຳມະດາ ສິ່ງທີ່ມີຄວາມບໍ່ທ່ຽງເປັນທຳມະດາ ສິ່ງທີ່ມີຄວາມບໍ່ທ່ຽງເປັນທຳມະດາເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບມີຄວາມບໍ່ທ່ຽງເປັນທຳມະດາ ເວທະນາມີຄວາມບໍ່ທ່ຽງເປັນທຳມະດາ ສັນຍາມີຄວາມບໍ່ທ່ຽງເປັນທຳມະດາ ສັງຂານມີຄວາມບໍ່ທ່ຽງເປັນທຳມະດາ ວິນຍານມີຄວາມບໍ່ທ່ຽງເປັນທຳມະດາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະນິດຈະທຳມະສູດທີ ໔ ຈົບ**

# ໕. ທຸກຂະສູດ

## ວ່າດ້ວຍສິ່ງທີ່ເປັນທຸກ

[໑໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ທຸກ ທຸກ ທຸກເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບເປັນທຸກ ເວທະນາເປັນທຸກ ສັນຍາເປັນທຸກ ສັງຂານເປັນທຸກ ວິນຍານເປັນທຸກ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸກຂະສູດທີ ໕ ຈົບ**

# ໖. ທຸກຂະທຳມະສູດ

## ວ່າດ້ວຍສິ່ງທີ່ມີທຸກເປັນທຳມະດາ

[໑໗໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ມີທຸກເປັນທຳມະດາ ສິ່ງທີ່ມີທຸກເປັນທຳມະດາ ສິ່ງທີ່ມີທຸກເປັນທຳມະດາເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບມີທຸກເປັນທຳມະດາ ເວທະນາມີທຸກເປັນທຳມະດາ ສັນຍາມີທຸກເປັນທຳມະດາ ສັງຂານມີທຸກເປັນທຳມະດາ ວິນຍານມີທຸກເປັນທຳມະດາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ

**ທຸກຂະທຳມະສູດທີ ໖ ຈົບ**

## ໗. ອະນັດຕະສູດ

### ວ່າດ້ວຍສິ່ງທີ່ເປັນອະນັດຕາ

[໑໗໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ອະນັດຕາ ອະນັດຕາ ອະນັດຕາເປັນແບບໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບເປັນອະນັດຕາ ເວທະນາເປັນອະນັດຕາ ສັນຍາເປັນອະນັດຕາ ສັງຂານເປັນອະນັດຕາ ວິນຍານເປັນອະນັດຕາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ

**ອະນັດຕະສູດທີ ໗ ຈົບ**

## ໘. ອະນັດຕະທຳມະສູດ

### ວ່າດ້ວຍສິ່ງທີ່ມີອະນັດຕາເປັນທຳມະດາ

[໑໗໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ມີອະນັດຕາເປັນທຳມະດາ ສິ່ງທີ່ມີອະນັດຕາເປັນທຳມະດາ ສິ່ງທີ່ມີອະນັດຕາເປັນທຳມະດາເປັນແບບໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບມີອະນັດຕາເປັນທຳມະດາ ເວທະນາມີ

ອະນັດຕາເປັນທຳມະດາ ສັນຍາມີອະນັດຕາເປັນທຳມະດາ ສັງຂານມີອະນັດຕາເປັນທຳມະດາ ວິນຍານມີອະນັດຕາເປັນທຳມະດາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະນັດຕະທຳມະສູດທີ ໘ ຈົບ**

# ໙. ຂະຍະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມໝົດໄປເປັນທຳມະດາ

[໑໗໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ມີຄວາມໝົດໄປເປັນທຳມະດາ ສິ່ງທີ່ມີຄວາມໝົດໄປເປັນທຳມະດາ ສິ່ງທີ່ມີຄວາມໝົດໄປເປັນທຳມະດາເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບມີຄວາມໝົດໄປເປັນທຳມະດາ ເວທະນາມີຄວາມໝົດໄປເປັນທຳມະດາ ສັນຍາມີຄວາມໝົດໄປເປັນທຳມະດາ ສັງຂານມີຄວາມໝົດໄປເປັນທຳມະດາ ວິນຍານມີຄວາມໝົດໄປເປັນທຳມະດາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ຂະຍະທຳມະສູດທີ ໙ ຈົບ**

# ໑໐. ວະຍະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມເສື່ອມໄປເປັນທຳມະດາ

[໑໗໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ມີຄວາມເສື່ອມໄປເປັນທຳມະດາ ສິ່ງທີ່ມີຄວາມເສື່ອມໄປເປັນທຳມະດາ ສິ່ງທີ່ມີຄວາມເສື່ອມໄປເປັນທຳມະດາເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບມີຄວາມເສື່ອມໄປເປັນທຳມະດາ ເວທະນາມີຄວາມເສື່ອມໄປເປັນທຳມະດາ ສັນຍາມີຄວາມເສື່ອມໄປເປັນທຳມະດາ ສັງຂານມີຄວາມເສື່ອມໄປເປັນທຳມະດາ ວິນຍານມີຄວາມເສື່ອມໄປເປັນທຳມະດາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ວະຍະທຳມະສູດທີ ໑໐ ຈົບ**

## ໑໑. ສະມຸທະຍະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາ

[໑໗໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະຣາທະນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບມີຄວາມເກີດຂຶ້ນເປັນທຳມະດາ ເວທະນາມີຄວາມເກີດຂຶ້ນເປັນທຳມະດາ ສັນຍາມີຄວາມເກີດຂຶ້ນເປັນທຳມະດາ ສັງຂານມີຄວາມເກີດຂຶ້ນເປັນທຳມະດາ ວິນຍານມີຄວາມເກີດຂຶ້ນເປັນທຳມະດາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ສະມຸທະຍະທຳມະສູດທີ ໑໑ ຈົບ**

# ໑໘. ນິໂຣທະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມດັບໄປເປັນທຳມະດາ

[໑໗໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ສິ່ງທີ່ມີຄວາມດັບໄປເປັນທຳມະດາ ສິ່ງທີ່ມີຄວາມດັບໄປເປັນທຳມະດາ ສິ່ງທີ່ມີຄວາມດັບໄປເປັນທຳມະດາເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາທະ ຮູບມີຄວາມດັບໄປເປັນທຳມະດາ ເວທະນາມີຄວາມດັບໄປເປັນທຳມະດາ ສັນຍາມີຄວາມດັບໄປເປັນທຳມະດາ ສັງຂານມີຄວາມດັບໄປເປັນທຳມະດາ ວິນຍານມີຄວາມດັບໄປເປັນທຳມະດາ

ຣາທະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ນິໂຣທະທຳມະສູດທີ ໑໘ ຈົບ**

**ທຸຕິຍະວັກ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

| | |
|---|---|
| ໑. ມາຣະສູດ | ໒. ມາຣະທຳມະສູດ |
| ໓. ອະນິດຈະສູດ | ໔. ອະນິດຈະທຳມະສູດ |
| ໕. ທຸກຂະສູດ | ໖. ທຸກຂະທຳມະສູດ |
| ໗. ອະນັດຕະສູດ | ໘. ອະນັດຕະທຳມະສູດ |
| ໙. ຂະຍະທຳມະສູດ | ໑໐. ວະຍະທຳມະສູດ |
| ໑໑. ສະມຸທະຍະທຳມະສູດ | ໑໘. ນິໂຣທະທຳມະສູດ |

# ໓. ອາຍາຈະນະວັກ

## ໝວດວ່າດ້ວຍການອາຣາດທະນາ

## ໑-໑໑. ມາຣາທິສຸດຕະເອກາທະສະກະ

## ວ່າດ້ວຍພຣະສູດ ໑໑ ສູດ ມີມາຣະສູດເປັນຕົ້ນ

## ໑. ມາຣະສູດ

### ວ່າດ້ວຍມານ

[໑໘໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຣາທະ ສິ່ງໃດເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະ ໃນສິ່ງນັ້ນ ກໍອັນໃດນໍ? ເປັນມານ

ຄື ຮູບເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນຮູບນັ້ນ
ເວທະນາເປັນມານ ທ່ານເພິ່ງລະສັນທະ ຯລຯ ໃນເວທະນານັ້ນ
ສັນຍາເປັນມານ ທ່ານເພິ່ງລະສັນທະ ຯລຯ ໃນສັນຍານັ້ນ
ສັງຂານເປັນມານ ທ່ານເພິ່ງລະສັນທະ ຯລຯ ໃນສັງຂານນັ້ນ
ວິນຍານເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນວິນຍານນັ້ນ

ຣາທະ ສິ່ງໃດເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ

**ມາຣະສູດທີ ໑ ຈົບ**

## ໗. ມາຣະທຳມະສູດ

### ວ່າດ້ວຍທຳຂອງມານ

[໑໗໓] ຣາທະ ສິ່ງໃດເປັນທຳຂອງມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະ ໃນສິ່ງນັ້ນ ຯລຯ

**ມາຣະທຳມະສູດທີ ໗ ຈົບ**

## ໓. ອະນິດຈະສູດ

### ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໑໗໔] ຣາທະ ສິ່ງໃດບໍ່ທ່ຽງ ຯລຯ

**ອະນິດຈະສູດທີ ໓ ຈົບ**

## ໔. ອະນິດຈະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມບໍ່ທ່ຽງເປັນທຳມະດາ

[໑໗໕] ຣາທະ ສິ່ງໃດມີຄວາມບໍ່ທ່ຽງເປັນທຳມະດາ ຯລຯ

**ອະນິດຈະທຳມະສູດທີ ໔ ຈົບ**

## ໕. ທຸກຂະສູດ

### ວ່າດ້ວຍສິ່ງທີ່ເປັນທຸກ

[໑໗໖] ຣາທະ ສິ່ງໃດເປັນທຸກ ຯລຯ

**ທຸກຂະສູດທີ ໕ ຈົບ**

## ໖. ທຸກຂະທຳມະສູດ

### ວ່າດ້ວຍສິ່ງທີ່ມີທຸກເປັນທຳມະດາ

[໑໗໗] ຣາທະ ສິ່ງໃດມີທຸກເປັນທຳມະດາ ຯລຯ

**ທຸກຂະທຳມະສູດທີ ໖ ຈົບ**

## ໗. ອະນັດຕະສູດ

### ວ່າດ້ວຍສິ່ງທີ່ເປັນອະນັດຕາ

[໑໗໘] ຣາທະ ສິ່ງໃດເປັນອະນັດຕາ ຯລຯ

**ອະນັດຕະສູດທີ ໗ ຈົບ**

## ໘. ອະນັດຕະທຳມະສູດ

### ວ່າດ້ວຍສິ່ງທີ່ມີອະນັດຕາເປັນທຳມະດາ

[໑໗໙] ຣາທະ ສິ່ງໃດມີອະນັດຕາເປັນທຳມະດາ ຯລຯ

**ອະນັດຕະທຳມະສູດທີ ໘ ຈົບ**

## ໙. ຂະຍະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມໝົດໄປເປັນທຳມະດາ

[໑໘໐] ຣາທະ ສິ່ງໃດມີຄວາມໝົດໄປເປັນທຳມະດາ ຯລຯ

**ຂະຍະທຳມະສູດທີ ໙ ຈົບ**

# ໑໐. ວະຍະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມເສື່ອມໄປເປັນທຳມະດາ

[໑໙໑] ຣາທະ ສິ່ງໃດມີຄວາມເສື່ອມໄປເປັນທຳມະດາ ຯລຯ

**ວະຍະທຳມະສູດທີ ໑໐ ຈົບ**

# ໑໑. ສະມຸທະຍະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາ

[໑໙໔] ຣາທະ ສິ່ງໃດມີຄວາມເກີດຂຶ້ນເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ ຯລຯ

**ສະມຸທະຍະທຳມະສູດທີ ໑໑ ຈົບ**

# ໑໔. ນິໂຣທະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມດັບໄປເປັນທຳມະດາ

[໑໙໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະຣາທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຣາທະ ສິ່ງໃດມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ມີຄວາມດັບໄປເປັນທຳມະດາ

ຄື ຮູບມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ໃນຮູບນັ້ນ

ເວທະນາມີຄວາມດັບໄປເປັນທຳມະດາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ໃນວິນຍານນັ້ນ

ຣາທະ ສິ່ງໃດ ມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະ ໃນສິ່ງນັ້ນ

**ນິໂຣທະທຳມະສູດທີ ໑໒ ຈົບ**

**ອາຍາຈະນະວັກທີ ໓ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

# ໔. ອຸປະນິສິນນະວັກ

## ໝວດວ່າດ້ວຍຜູ້ເຂົ້າໄປນັ່ງໃກ້

## ໑-໑໑. ມາຣາທິສຸດຕະເອກາທະສະກະ

### ວ່າດ້ວຍພຣະສູດ ໑໑ ສູດ ມີມາຣະສູດເປັນຕົ້ນ

## ໑. ມາຣະສູດ

### ວ່າດ້ວຍມານ

[໑໘໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະຣາທະຜູ້ນັ່ງຢູ່ບ່ອນທີ່ສົມຄວນ ດັ່ງນີ້ວ່າ ຣາທະ ສິ່ງໃດເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ເປັນມານ<br>
ຄື ຮູບເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນຮູບນັ້ນ ຯລຯ<br>
ວິນຍານ ເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນວິນຍານນັ້ນ<br>
ຣາທະ ສິ່ງໃດເປັນມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ

**ມາຣະສູດທີ ໑ ຈົບ**

## ໒. ມາຣະທຳມະສູດ

### ວ່າດ້ວຍທຳຂອງມານ

[໑໘໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຣາທະ ສິ່ງໃດເປັນທຳຂອງມານ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ ຯລຯ

**ມາຣະທຳມະສູດທີ ໒ ຈົບ**

## ໓. ອະນິດຈະສູດ

### ວ່າດ້ວຍສິ່ງທີ່ບໍ່ທ່ຽງ

[໑໙໓] ຣາທະ ສິ່ງໃດບໍ່ທ່ຽງ ฯລฯ

**ອະນິດຈະສູດທີ ໓ ຈົບ**

## ໔. ອະນິດຈະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມບໍ່ທ່ຽງເປັນທຳມະດາ

[໑໙໗] ຣາທະ ສິ່ງໃດມີຄວາມບໍ່ທ່ຽງເປັນທຳມະດາ ฯລฯ

**ອະນິດຈະທຳມະສູດທີ ໔ ຈົບ**

## ໕. ທຸກຂະສູດ

### ວ່າດ້ວຍສິ່ງທີ່ເປັນທຸກ

[໑໙໘] ຣາທະ ສິ່ງໃດເປັນທຸກ ฯລฯ

**ທຸກຂະສູດທີ ໕ ຈົບ**

## ໖. ທຸກຂະທຳມະສູດ

### ວ່າດ້ວຍສິ່ງທີ່ມີທຸກເປັນທຳມະດາ

[໑໙໙] ຣາທະ ສິ່ງໃດມີທຸກເປັນທຳມະດາ ฯລฯ

**ທຸກຂະທຳມະສູດທີ ໖ ຈົບ**

## ໗. ອະນັດຕະສູດ

### ວ່າດ້ວຍສິ່ງທີ່ເປັນອະນັດຕາ

[໔໐໐] ຣາທະ ສິ່ງໃດເປັນອະນັດຕາ ฯລฯ

**ອະນັດຕະສູດທີ ໗ ຈົບ**

## ໘. ອະນັດຕະທຳມະສູດ

### ວ່າດ້ວຍສິ່ງທີ່ມີອະນັດຕາເປັນທຳມະດາ

[໔໐໑] ຣາທະ ສິ່ງໃດມີອະນັດຕາເປັນທຳມະດາ ฯລฯ

**ອະນັດຕະທຳມະສູດທີ ໘ ຈົບ**

## ໙. ຂະຍະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມໝົດໄປເປັນທຳມະດາ

[໔໐໔] ຣາທະ ສິ່ງໃດມີຄວາມໝົດໄປເປັນທຳມະດາ ฯລฯ

**ຂະຍະທຳມະສູດທີ ໙ ຈົບ**

## ໑໐. ວະຍະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມເສື່ອມໄປເປັນທຳມະດາ

[໔໐໓] ຣາທະ ສິ່ງໃດມີຄວາມເສື່ອມໄປເປັນທຳມະດາ ฯລฯ

**ວະຍະທຳມະສູດທີ ໑໐ ຈົບ**

# ໑໑. ສະມຸທະຍະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມເກີດຂຶ້ນເປັນທຳມະດາ

[໔໐໔] ຣາທະ ສິ່ງໃດມີຄວາມເກີດຂຶ້ນເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ ຯລຯ

**ສະມຸທະຍະທຳມະສູດທີ ໑໑ ຈົບ**

# ໑໔. ນິໂຣທະທຳມະສູດ

## ວ່າດ້ວຍສິ່ງທີ່ມີຄວາມດັບໄປເປັນທຳມະດາ

[໔໐໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານພຣະຣາທະຜູ້ນັ່ງຢູ່ບ່ອນທີ່ສົມຄວນ ດັ່ງນີ້ວ່າ ຣາທະ ສິ່ງໃດມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ມີຄວາມດັບໄປເປັນທຳມະດາ

ຄື ຮູບມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນຮູບນັ້ນ

ເວທະນາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນວິນຍານນັ້ນ

ຣາທະ ສິ່ງໃດມີຄວາມດັບໄປເປັນທຳມະດາ ທ່ານເພິ່ງລະສັນທະ ຣາຄະ ສັນທະຣາຄະໃນສິ່ງນັ້ນ

**ນິໂຣທະທຳມະສູດທີ ໑໔ ຈົບ**

**ອຸປະນິສິນນວັກທີ ໔ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ມາຣະສູດ
໒. ມາຣະທຳມະສູດ
໓. ອະນິດຈະສູດ
໔. ອະນິດຈະທຳມະສູດ
໕. ທຸກຂະສູດ
໖. ທຸກຂະທຳມະສູດ
໗. ອະນັດຕະສູດ
໘. ອະນັດຕະທຳມະສູດ
໙. ຂະຍະທຳມະສູດ
໑໐. ວະຍະທຳມະສູດ
໑໑. ສະມຸທະຍະທຳມະສູດ
໑໒. ນິໂຣທະທຳມະສູດ

**ຣາທະສັງຍຸດ ຈົບ**

# ๓. ທິດຖິສັງຍຸດ

# ໑. ໂສຕາປັດຕິວັກ

## ໝວດວ່າດ້ວຍໂສດາປັດຕິມັກ

## ໑. ວາຕະສູດ

### ວ່າດ້ວຍທິດຖິວ່າລົມບໍ່ພັດເປັນຕົ້ນ

[໔໐໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ເຂດນະຄອນສາວັດຖີ ຯລຯ ໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຢຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ພິກຂຸເຫຼົ່ານັ້ນ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນບ່ອນເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າ ທໍ່ນັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ່ງຊັດໄດ້ ພິກຂຸທັງຫຼາຍຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຢຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ເວທະນາທ່ຽງຫຼືບໍ່ທ່ຽງ ຯລຯ ສັນຍາທ່ຽງຫຼືບໍ່ທ່ຽງ ຯລຯ ສັງຂານທ່ຽງຫຼືບໍ່ທ່ຽງ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງບໍ່ຫຼືທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້

ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ລະຄວາມສົງໄສແມ່ນໃນເຫດເກີດແຫ່ງທຸກ ລະຄວາມສົງໄສແມ່ນໃນຄວາມດັບແຫ່ງທຸກ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ວາຕະສູດທີ ໑ ຈົບ**

# ໘. ເອຕັງມະມະສູດ

## ວ່າດ້ວຍທິດຖິວ່ານັ້ນຂອງເຮົາ

[໔໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ພິກຂຸເຫຼົ່ານັ້ນ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ
ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ໆລໆ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ບໍ່ໄດ້ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ສັບນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ໆລໆ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ເອຕັງມະມະສູດທີ ໘ ຈົບ**

# ໙. ໂສອັດຕາສູດ

## ວ່າດ້ວຍທິດຖິວ່າອັດຕາກັບໂລກເປັນແນວດຽວກັນ

[໔໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຢຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ

ພິກຂຸເຫຼົ່ານັ້ນ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ໆລໆ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ອັດຕາ ຯລຯ ມີຄວາມບໍ່ຜັນແປເປັນທຳມະດາ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ອັດຕາ ຯລຯ ມີຄວາມບໍ່ຜັນແປເປັນທຳມະດາ
ບໍ່ໄດ້ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ອັດຕາ ຯລຯ ມີຄວາມບໍ່ຜັນແປເປັນທຳມະດາ

ບໍ່ໄດ້ ຂ້ານ້ອຍ
ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ
ບໍ່ທ່ຽງ ຂ້ານ້ອຍ
ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ອັດຕາກັບໂລກເປັນແນວດຽວກັນ ເຮົານັ້ນລະໂລກນີ້ໄປແລ້ວຈັກເປັນຜູ້ທ່ຽງແທ້ ໝັ້ນຍືນ ຄົງທົນ ມີຄວາມບໍ່ຜັນແປເປັນທຳມະດາ
ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສັມໂພທິໃນມື້ຂ້າງໜ້າ

**ໂສອັດຕາສູດທີ ໓ ຈົບ**

# ໔. ໂນຈະເມສິຍາສູດ

## ວ່າດ້ວຍທິດຖິວ່າເຮົາບໍ່ເພິ່ງມີ

[໔໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຢຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ພິກຂຸເຫຼົ່ານັ້ນທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຢຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຢຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍ

ຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ບໍ່ໄດ້ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ແມ່ນບໍຣິຂານຂອງເຮົາກໍຈັກບໍ່ມີ

ບໍ່ໄດ້ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຖ້າເຮົາບໍ່ເພິ່ງມີ ແມ່ນບໍຣິຂານຂອງເຮົາກໍບໍ່ເພິ່ງມີ ຖ້າເຮົາຈັກບໍ່ໄດ້ມີແລ້ວ ບໍຣິຂານຂອງເຮົາກໍຈັກບໍ່ມີ

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສໍາເລັດສໍາໂພທິໃນມື້ຂ້າງໜ້າ

**ໂນຈະເມສິຍາສູດທີ ໔ ຈົບ**

# ໕. ນັດຖິທິນນະສູດ

## ວ່າດ້ວຍທິດຖິວ່າທານທີ່ໃຫ້ແລ້ວບໍ່ມີຜົນເປັນຕົ້ນ

[໔໑໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ

ການເຊັ່ນສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີ ແລະເຮັດຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດປະຕິບັດຖືກເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນໃຫ້ຜູ້ອື່ນຮູ້ແຈ້ງກໍບໍ່ມີໃນໂລກ໌ ບຸຣຸດຄືປະຊຸມແຫ່ງມະຫາພູຕະຮູບທັງ ໔ ເມື່ອຕາຍໄປ ທາດດິນໄປຕາມທາດດິນ ທາດນ້ຳໄປຕາມທາດນ້ຳ ທາດໄຟໄປຕາມທາດໄຟ ທາດລົມໄປຕາມທາດລົມ ອິນຊີທັງຫຼາຍຍ່ອມຜັນແປໄປເປັນອາກາດທາດ ບຸຣຸດທັງຫຼາຍມີຕຽງເປັນທີ່ ໕ ນຳສົບໄປ ຮອຍຕີນຜາກົດພຽງແຄ່ປ່າຊ້າ ກາຍເປັນກະດູກຂາວຈຸ່ມພຸ່ນຄືສີນົກກາງແກ ການເຊັ່ນ ສວງສິ້ນສຸດລົງແຄ່ເຖົ່າຖ່ານ ຄົນຈົ໋າບັນຍັດທານນີ້ໄວ້ ຄຳທີ່ຄົນລາງພວກຢ້ຳວ່າມີຜົນນັ້ນວ່າງເປົ່າ ຕົວະ ຂາດສາລະ ຫຼັງຈາກຕາຍໄປ ບໍ່ວ່າຄົນຈົ໋າແລະຄົນສະຫຼາດຍ່ອມຂາດສູນ ບໍ່ເກີດອີກ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ฯລฯ ຫຼັງຈາກຕາຍໄປ ບໍ່ວ່າຄົນຈົ໋າແລະຄົນສະຫຼາດຍ່ອມຂາດສູນ ບໍ່ເກີດອີກ

ເມື່ອມີເວທະນາ ฯລฯ
ເມື່ອມີສັນຍາ ฯລฯ
ເມື່ອມີສັງຂານ ฯລฯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ฯລฯ ຫຼັງຈາກຕາຍໄປ ບໍ່ວ່າຄົນຈົ໋າແລະຄົນສະຫຼາດຍ່ອມຂາດສູນ ບໍ່ເກີດອີກ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ฯລฯ ຫຼັງຈາກຕາຍໄປ ບໍ່ວ່າຄົນຈົ໋າແລະຄົນສະຫຼາດຍ່ອມຂາດສູນ ບໍ່ເກີດອີກ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ຯລຯ ຫຼັງຈາກຕາຍໄປ ບໍ່ວ່າຄົນຈົ້າແລະຄົນສະຫຼາດຍ່ອມຂາດສູນ ບໍ່ເກີດອີກ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ຯລຯ ຄໍາທີ່ຄົນລາງພວກຢໍ້າວ່າມີຜົນນັ້ນວ່າງເປົ່າ ຕົວະ ຂາດສາລະ ຫຼັງຈາກຕາຍໄປ ບໍ່ວ່າຄົນຈົ້າແລະຄົນສະຫຼາດຍ່ອມຂາດສູນ ບໍ່ເກີດອີກ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສໍາເລັດສັມໂພທິໃນມື້ຂ້າງໜ້າ

**ນັດຖິທິນນະສູດທີ ໕ ຈົບ**

# ໖. ກະໂຣໂຕສູດ

## ວ່າດ້ວຍທິດຖິວ່າເມື່ອບຸກຄົນເຮັດເອງເປັນຕົ້ນ

[໔໑໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລໍາບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລໍາບາກ ດີ້ນຮົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຮົນ ຂ້າສັດ ລັກຊັບ ເຈາະປ່ອງ ຈອບລັກ ປຸ້ນ ເຮັດໂຈຣະກໍາໃນເຮືອນຫຼັງດຽວ ດັກຊຸ່ມທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ (ເຊັ່ນນັ້ນ) ບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນຈະໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ ໃຫ້ເປັນລານຕາກຊີ້ນ ໃຫ້ເປັນກອງດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນຈະໄປສູ່ຝັ່ງຂວາແຫ່ງແມ່ນ້ຳຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນຈະໄປສູ່ຝັ່ງຊ້າຍແຫ່ງແມ່ນ້ຳຄົງຄາ ໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ฯລฯ ຍ່ອມບໍ່ມີບຸນ ฯລฯ ບໍ່ມີບຸນມາເຖິງເຂົາ

ເມື່ອມີເວທະນາ ฯລฯ
ເມື່ອມີສັນຍາ ฯລฯ
ເມື່ອມີສັງຂານ ฯລฯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ฯລฯ ຍ່ອມບໍ່ມີບຸນ ฯລฯ ບໍ່ມີບຸນມາເຖິງເຂົາ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ฯລฯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ฯລฯ ຍ່ອມບໍ່ມີບຸນ ฯລฯ ບໍ່ມີບຸນມາເຖິງເຂົາ
ບໍ່ໄດ້ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ฯລฯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ฯລฯ ຍ່ອມບໍ່ມີບຸນ ฯລฯ ບໍ່ມີບຸນມາເຖິງເຂົາ
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຯລຯ ຍ່ອມບໍ່ມີບຸນ ຯລຯ ບໍ່ມີບຸນມາເຖິງເຂົາ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງ ຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມ ແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ກະໂຮໂຕສູດທີ ໖ ຈົບ**

# ໗. ເຫຕຸສູດ

## ວ່າດ້ວຍທິດຖິວ່າບໍ່ມີເຫດເປັນຕົ້ນ

[໔໑໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຄວາມເສົ້າໝອງຂອງສັດທັງຫຼາຍ ບໍ່ມີເຫດ ບໍ່ມີ ປັດໄຈ ສັດທັງຫຼາຍບໍ່ມີເຫດ ບໍ່ມີປັດໄຈ ເສົ້າໝອງເອງ ຄວາມບໍລິສຸດຂອງສັດທັງຫຼາຍ ບໍ່ມີເຫດ ບໍ່ມີປັດໄຈ ສັດທັງຫຼາຍບໍ່ມີເຫດ ບໍ່ມີປັດໄຈ ບໍລິສຸດເອງ ບໍ່ມີກຳລັງ ບໍ່ມີຄວາມພຽນ ບໍ່ມີຄວາມ ສາມາດຂອງບຸຣຸດ ບໍ່ມີຄວາມພະຍາຍາມຂອງບຸຣຸດ ສັດ ປານະ ພູຕະ ຊີວະທັງປວງ ລ້ວນບໍ່ມີ ອຳນາດ ບໍ່ມີກຳລັງ ບໍ່ມີຄວາມພຽນ ຜັນແປໄປຕາມໂຊກຊະຕາຕາມສະຖານະພາບທາງສັງຄົມ ແລະຕາມລັກສະນະສະເພາະຂອງຕົນ ສະເຫວີຍສຸກແລະທຸກໃນອະພິຊາດທັງ ໖ ທີ່ນັ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີ ພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຯລຯ ບໍ່ມີເຫດ ບໍ່ມີປັດໄຈ ຯລຯ ສະເຫວີຍສຸກແລະທຸກໃນອະພິຊາດທັງ ໖ ທີ່ນັ້ນ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຯລຯ ບໍ່ມີເຫດ ບໍ່ມີປັດໄຈ ຯລຯ ສະເຫວີຍສຸກແລະທຸກໃນອະພິຊາດທັງ ໖ ທີ່ນັ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຯລຯ ບໍ່ມີເຫດ ບໍ່ມີປັດໄຈ ຯລຯ ສະເຫວີຍສຸກແລະທຸກໃນອະພິຊາດທັງ ໖ ທີ່ນັ້ນ

ບໍ່ໄດ້ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຯລຯ ບໍ່ມີເຫດ ບໍ່ມີປັດໄຈ ຯລຯ ສະເຫວີຍສຸກແລະທຸກໃນອະພິຊາດທັງ ໖ ທີ່ນັ້ນ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຯລຯ ບໍ່ມີເຫດ ບໍ່ມີປັດໄຈ ຯລຯ ສະເຫວີຍສຸກແລະທຸກໃນອະພິຊາດທັງ ໖ ທີ່ນັ້ນ

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສຳເລັດສັມໂພທິໃນມື້ຂ້າງໜ້າ

**ເຫຕຸສູດທີ ໗ ຈົບ**

# ໗. ມະຫາທິດຖິສູດ

## ວ່າດ້ວຍທິດຖິຫຼາຍປະການ

[໔໑໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ສະພາວະ ໗ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນຣະມິດ ບໍ່ມີຜູ້ໃຫ້ເນຣະມິດ ໝັ້ນຍືນ ໝັ້ນຄົງຄືຈອມພູ ຄື ເສົາຣະນຽດ ບໍ່ຫວັ່ນໄຫວ ບໍ່ຜັນແປ ບໍ່ກະທົບກັນ ບໍ່ກໍ່ໃຫ້ເກີດສຸກຫຼືທຸກ ຫຼື ທັງສຸກແລະທຸກແກ່ກັນແລະກັນ

ສະພາວະ ໗ ກອງ ອັນໃດແດ່? ຄື

| | |
|---|---|
| ໑. ກອງແຫ່ງທາດດິນ | ໒. ກອງແຫ່ງທາດນ້ຳ |
| ໓. ກອງແຫ່ງທາດໄຟ | ໔. ກອງແຫ່ງທາດລົມ |
| ໕. ກອງສຸກ | ໖. ກອງທຸກ |
| ໗. ກອງຊີວະ | |

ສະພາວະ ໗ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ບໍ່ມີຜູ້ເນຣະມິດ ບໍ່ມີຜູ້ໃຫ້ເນຣະມິດ ໝັ້ນຍືນ ໝັ້ນຄົງຄືຈອມພູ ຄືເສົາຣະນຽດ ບໍ່ຫວັ່ນໄຫວ ບໍ່ຜັນແປ ບໍ່ກະທົບກັນ ບໍ່ກໍ່ໃຫ້ເກີດສຸກຫຼືທຸກ ຫຼືທັງສຸກແລະທຸກແກ່ກັນແລະກັນ ໃຜກໍຕາມແມ່ນຈະເອົາອາວຸດຄົມຕັດຫົວໃຜ ກໍບໍ່ຊື່ວ່າໃຜປົງຊີວິດໃຜໄດ້ ຍ້ອນເປັນພຽງອາວຸດແຊກຜ່ານໄປລະຫວ່າງສະພາວະ ໗ ກອງທີ່ນັ້ນເອງ ອັນໜຶ່ງກຳເນີດທີ່ເປັນປະທານ ໑,໔໐໖,໖໐໐ ກຳ ໕໐໐ ກຳ ໕ ກຳ ໓ ກຳເຄິ່ງ ປະຕິປະທາ ໖໒ ອັນຕະຣະກັບ ໖໒ ອະພິຊາດ ໖ ປຸຣິສະພູມ ໘ ອາຊີວົກ ໔,໙໐໐ ປະຣິພາຊົກ ໔,໙໐໐ ນາຄະວາດ ໔,໙໐໐ ອິນຊີ ໒,໐໐໐ ນະຣົກ ໓,໐໐໐ ຣະໂຊທາດ ໓໖ ສັນຍີທ້ອງ ໗ ອະສັນຍີທ້ອງ ໗ ນິຄັນຖີທ້ອງ ໗ ເທວະດາ ໗ ມະນຸດ ໗ ປີສາດ ໗ ສະ ໗ ຕາໄມ້ໄຜ່ ໗ ຕາໄມ້ໄຜ່ ໗໐໐ ເຫວໃຫຍ່ ໗ ເຫວນ້ອຍ ໗໐໐ ມະຫາສຸບິນ ໗ ສຸບິນ ໗໐໐ ມະຫາກັບ ໘,໔໐໐,໐໐໐ ເຫຼົ່ານີ້ ທີ່ຄົນພານແລະບັນດິດພາກັນທ່ຽວວຽນວ່າຍໄປແລ້ວ ຈັກເຮັດບ່ອນສຸດທຸກໄດ້ເອງ ບໍ່ມີຄວາມສົມຫວັງໃນຄວາມປາຖະໜາວ່າ ເຮົາຈັກອົບຮົມກຳທີ່ຍັງບໍ່ໃຫ້ຜົນໃຫ້ອຳນວຍຜົນ ຫຼື ສຳຜັດກຳທີ່ໃຫ້ຜົນແລ້ວ ຈັກເຮັດໃຫ້ໝົດ ໝົດໄປດ້ວຍສີນ ພົດ ຕະບະ ຫຼື ພົມມະຈັນນີ້ ບໍ່ມີສຸກທຸກທີ່ເຮັດໃຫ້ສິ້ນສຸດລົງໄດ້ (ຈຳນວນທໍ່ນັ້ນທໍ່ນີ້) ຄື ຕວງດ້ວຍໂອ ສົງສານທີ່ຈະເຮັດໃຫ້ສິ້ນສຸດບໍ່ມີເລີຍ ບໍ່ມີຄວາມເສື່ອມແລະຄວາມຈະເລີນ ບໍ່ມີການເລື່ອນຂຶ້ນສູງຫຼືເລື່ອນລົງຕ່ຳ ພວກຄົນພານແລະບັນດິດພາກັນທ່ຽວວຽນວ່າຍໄປແລ້ວ ສະເຫວີຍສຸກແລະທຸກເອງ ຄື ປຸ້ມຝ້າຍທີ່ຖືກດຶກໄປຍ່ອມມາຍໝົດໄປເອງ ສັນນັ້ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ສະພາວະ ກໍ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ຯລຯ ສະເຫວີຍສຸກແລະທຸກເອງ ຯລຯ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ສະພາວະ ກໍ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ຯລຯ ສະເຫວີຍສຸກແລະທຸກເອງ ຯລຯ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ສະພາວະ ກໍ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ຯລຯ ສະເຫວີຍສຸກແລະທຸກເອງ ຯລຯ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ສະພາວະ ກໍ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ຯລຯ ສະເຫວີຍສຸກແລະທຸກເອງ ຯລຯ

ບໍ່ໄດ້ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ສະພາວະ ກໍ ກອງນີ້ບໍ່ມີຜູ້ສ້າງ ບໍ່ມີຜູ້ບັນດານ ຯລຯ ສະເຫວີຍສຸກແລະທຸກເອງ ຯລຯ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ມະຫາທິດຖິສູດທີ ໘ ຈົບ**

# ໙. ສັດສະຕະທິດຖິສູດ

## ວ່າດ້ວຍທິດຖິວ່າໂລກທ່ຽງ

[໔໑໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ໂລກທ່ຽງ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ໂລກທ່ຽງ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ໂລກທ່ຽງ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ໂລກທ່ຽງ
ບໍ່ໄດ້ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ໂລກທ່ຽງ
ບໍ່ໄດ້ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ໂລກທ່ຽງ
ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ສັດສະຕະທິດຖິສູດທີ ໙ ຈົບ**

# ໑໐. ອະສັດສະຕະທິດຖິສູດ

## ວ່າດ້ວຍທິດຖິວ່າໂລກບໍ່ທ່ຽງ

[໔໑໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ໂລກບໍ່ທ່ຽງ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຣູບ ຯລຯ ເມື່ອມີເວທະນາ ຯລຯ ເມື່ອມີສັນຍາ ຯລຯ ເມື່ອມີສັງຂານ ຯລຯ ເມື່ອມີວິນຍານ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ໂລກບໍ່ທ່ຽງ
ບໍ່ໄດ້ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ
ບໍ່ທ່ຽງ ຂ້ານ້ອຍ

ຯລຯ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ໂລກບໍ່ທ່ຽງ?
ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ຯລຯ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ອະສັດສະຕະທິດຖິສູດທີ ໑໐ ຈົບ**

## ໑໑. ອັນຕະວາສູດ

### ວ່າດ້ວຍທິດຖິວ່າໂລກມີບ່ອນສຸດ

[໔໑໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ໂລກມີບ່ອນສຸດ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ຯລຯ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ອັນຕະວາສູດທີ ໑໑ ຈົບ**

# ໑໘. ອະນັນຕະວາສູດ

## ວ່າດ້ວຍທິດຖິວ່າໂລກບໍ່ມີບ່ອນສຸດ

[໔໑໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຢຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ໂລກບໍ່ມີບ່ອນສຸດ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ຯລຯ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ອະນັນຕະວາສູດທີ ໑໘ ຈົບ**

# ໑໙. ຕັງຊີວັງຕັງສະຣີຣັງສູດ

## ວ່າດ້ວຍທິດຖິວ່າຊີວະກັບສະຣີຣະເປັນແນວດຽວກັນ

[໔໑໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຢຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຊີວະກັບສະຣີຣະເປັນແນວດຽວກັນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ຯລຯ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ຕັງຊີວັງຕັງສະຣີຣັງສູດທີ ໑໙ ຈົບ**

# ໑໔. ອັນຍັງຊີວັງອັນຍັງສະຣີຣັງສູດ

## ວ່າດ້ວຍທິດຖິວ່າຊີວະກັບສະຣີຣະເປັນຄົນລະແນວກັນ

[໔໑໙] ເລື້ອງເກີດຂື້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂື້ນວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ຯລຯ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ອັນຍັງຊີວັງອັນຍັງສະຣີຣັງສູດທີ ໑໔ ຈົບ**

# ໑໕. ໂຫຕິຕະຖາຄະໂຕສູດ

## ວ່າດ້ວຍທິດຖິວ່າຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ

[໔໘໐] ເລື້ອງເກີດຂື້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂື້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ຯລຯ ມີຄວາມແນ່ນອນ ທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ໂຫຕິຕະຖາຄະໂຕສູດທີ ໑໕ ຈົບ**

# ໑໖. ນະໂຫຕິຕະຖາຄະໂຕສູດ

## ວ່າດ້ວຍທິດຖິວ່າຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ

[໔໔໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ຯລຯ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ນະໂຫຕິຕະຖາຄະໂຕສູດທີ ໑໖ ຈົບ**

# ໑໗. ໂຫຕິຈະນະຈະໂຫຕິຕະຖາຄະໂຕສູດ

## ວ່າດ້ວຍທິດຖິວ່າຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ

[໔໔໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ຯລຯ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ໂຫຕິຈະນະຈະໂຫຕິຕະຖາຄະໂຕສູດທີ ໑໗ ຈົບ**

# ໑໗. ເນວະໂຫຕິນະນະໂຫຕິຕະຖາຄະໂຕສູດ

## ວ່າດ້ວຍທິດຖິວ່າຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ

[໔໘໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ຯລຯ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ
ບໍ່ໄດ້ ຂ້ານ້ອຍ

ແມ່ນສິ່ງທີ່ບຸກຄົນໄດ້ເຫັນ ຟັງ ຮູ້ ຮັບຮູ້ ສະແຫວງຫາ ພິຈາຣະນາດ້ວຍໃຈ ທ່ຽງຫຼືບໍ່ທ່ຽງ
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ
ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດທີ່ອະຣິຍະສາວົກລະຄວາມສົງໄສໃນຖານະ ໖ ປະການນີ້ໄດ້ສັນນັ້ນ ຈຶ່ງລະຄວາມສົງໄສແມ່ນໃນທຸກ ລະຄວາມສົງໄສແມ່ນໃນເຫດເກີດແຫ່ງທຸກ ລະຄວາມ

ສິ່ງໄສແມ່ນໃນຄວາມດັບແຫ່ງທຸກ ລະຄວາມສົງໄສແມ່ນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງທຸກໄດ້

ພິກຂຸທັງຫຼາຍ ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສໍາເລັດສໍາໂພທິໃນມື້ຂ້າງໜ້າ

**ເນວະໂຫຕິນະ ນະໂຫຕິຕະຖາຄະຕະສູດທີ ໑໗ ຈົບ**

**ໂສຕາປັດຕິວັກທີ ໑ ຈົບ**

**ການຕອບບັນຫາ ໑໗ ຂໍ້ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

# ໘. ທຸຕິຍະຄະມະນະວັກ

## ໝວດວ່າດ້ວຍການໄປທີ ໘

## ໑. ວາຕະສູດ

### ວ່າດ້ວຍທິດຖິວ່າລົມບໍ່ພັດເປັນຕົ້ນ

[໘໘໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕິຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ບໍ່ທ່ຽງ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕິຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

**ວາຕະສູດທີ ໑ ຈົບ**

[໔໔໕-໔໘໐] (ເພິ່ງຂະຫຍາຍການຕອບບັນຫາທັງ ໑໗ ຂໍ້ໃຫ້ພິດສະດານ ຄືໃນວັກກ່ອນ)

**ໂທຕິຈະນະຈະໂທຕິຕະຖາຄະໂຕສູດທີ ໑໗ ຈົບ**

# ໑໗. ເນວະໂຫຕິນະນະໂຫຕິສູດ

## ວ່າດ້ວຍທິດຖິວ່າຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ

[໔໔໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຣູບ ຍ້ອນຖືໝັ້ນຣູບ ຍ້ອນຍຶດໝັ້ນຣູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

**ເນວະໂຫຕິນະນະໂຫຕິສູດທີ ໑໗ ຈົບ**

# ໑໘. ຣູປີອັດຕາສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ມີຮູບ

[໔໔໔] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີຮູບບໍ່ສະຫຼາຍໄປ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີຮູບບໍ່ສະຫຼາຍໄປ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີຮູບບໍ່ສະຫຼາຍໄປ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີຮູບບໍ່ສະຫຼາຍໄປ
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີຮູບບໍ່ສະຫຼາຍໄປ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີຮູບບໍ່ສະຫຼາຍໄປ
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີຮູບບໍ່ສະຫຼາຍໄປ

**ຮູປີອັດຕາສູດທີ ໑໗ ຈົບ**

# ໔໐. ອະຮູປີອັດຕາສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ບໍ່ມີຮູບ

[໔໘໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີຮູບບໍ່ສະຫຼາຍໄປ ຯລຯ

**ອະຣູປີອັດຕາສູດທີ ໔໐ ຈົບ**

# ໔໑. ຣູປີຈະອະຣູປີຈະອັດຕາສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ມີຮູບແລະບໍ່ມີຮູບ

[໔໔໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຫຼັງຈາກຕາຍແລ້ວ ອັດຕາທັງທີ່ມີຮູບແລະບໍ່ມີຮູບບໍ່ສະຫຼາຍໄປ ຯລຯ

**ຣູປີຈະອະຣູປີຈະອັດຕາສູດທີ ໔໑ ຈົບ**

# ໔໔. ເນວະຣູປີນາຣູປີອັດຕາສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນ

[໔໔໕] ຫຼັງຈາກຕາຍແລ້ວ ອັດຕາຈະວ່າມີຮູບກໍບໍ່ແມ່ນ ຈະວ່າບໍ່ມີຮູບກໍບໍ່ແມ່ນບໍ່ສະຫຼາຍໄປ ຯລຯ

**ເນວະຣູປີນາຣູປີອັດຕາສູດທີ ໔໔ ຈົບ**

# ໔໓. ເອກັນຕະສຸຂີສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ມີສຸກໂດຍສ່ວນດຽວ

[໔໔໖] ຫຼັງຈາກຕາຍແລ້ວ ອັດຕາທີ່ມີສຸກໂດຍສ່ວນດຽວບໍ່ສະຫຼາຍໄປ ຯລຯ

**ເອກັນຕະສຸຂີສູດທີ ໔໓ ຈົບ**

# ໔໔. ເອກັນຕະທຸກຂີສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ມີທຸກໂດຍສ່ວນດຽວ

[໔໔໗] ຫຼັງຈາກຕາຍແລ້ວ ອັດຕາທີ່ມີທຸກໂດຍສ່ວນດຽວບໍ່ສະຫຼາຍໄປ ຯລຯ

**ເອກັນຕະທຸກຂີສູດທີ ໔໔ ຈົບ**

# ໔໕. ສຸຂະທຸກຂີສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ມີທັງສຸກແລະທຸກ

[໔໔໘] ຫຼັງຈາກຕາຍແລ້ວ ອັດຕາທີ່ມີທັງສຸກແລະທຸກບໍ່ສະຫຼາຍໄປ ຯລຯ

**ສຸຂະທຸກຂີສູດທີ ໔໕ ຈົບ**

# ໔໖. ອະທຸກຂະມະສຸຂີສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ບໍ່ມີທັງທຸກແລະສຸກ

[໔໔໙] ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ມີທັງສຸກແລະທຸກບໍ່ສະຫຼາຍໄປແມ່ນບໍ?

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ບໍ່ໄດ້ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ເມື່ອມີທຸກ ຍ້ອນຖືໝັ້ນທຸກ ຍ້ອນຍຶດໝັ້ນທຸກ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

**ອະທຸກຂະມະສຸຂີສູດທີ ໒໖ ຈົບ**

**ທຸຕິຍະຄະມະນະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ວາຕະສູດ ຯລຯ | ໑໗. ເນວະໂຫຕິນະນະໂຫຕິສູດ |
| ໑໘. ຮູປີອັດຕາສູດ | ໒໐. ອະຮູປີອັດຕາສູດ |
| ໒໑. ຮູປີຈະອະຮູປີຈະອັດຕາສູດ | ໒໒. ເນວະຮູປີນາຮູປີອັດຕາສູດ |
| ໒໓. ເອກັນຕະສຸຂີສູດ | ໒໔. ເອກັນຕະທຸກຂີສູດ |
| ໒໕. ສຸຂະທຸກຂີສູດ | ໒໖. ອະທຸກຂະມະສຸຂີສູດ |

# ๓. ຕະຕິຍະຄະມະນະວັກ

## ໝວດວ່າດ້ວຍການໄປທີ ๓

## ໑. ນວາຕະສູດ

### ວ່າດ້ວຍທິດຖິວ່າລົມບໍ່ພັດເປັນຕົ້ນ

[໔໕໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ?

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ฯລฯ ໝັ້ນຄົງຄືເສົາຣະນຽດ

ເມື່ອມີເວທະນາ ฯລฯ
ເມື່ອມີສັນຍາ ฯລฯ
ເມື່ອມີສັງຂານ ฯລฯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ฯລฯ ໝັ້ນຄົງຄືເສົາຣະນຽດ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ฯລฯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ລົມບໍ່ພັດ ฯລฯ ໝັ້ນຄົງຄືເສົາຣະນຽດ
ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ເມື່ອມີສິ່ງນັ້ນ ຍ້ອນຖື ໝັ້ນສິ່ງນັ້ນ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະ ດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຯລຯ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນ ໄດ້ບໍວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ເມື່ອມີສິ່ງນັ້ນ ຍ້ອນຖື ໝັ້ນສິ່ງນັ້ນ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

**ນວາຕະສູດທີ ໑ ຈົບ**

[໔໔໑-໔໗໔] (ເພິ່ງຕື່ມສູດອີກ ໔໔ ສູດ ເຂົ້າມາໃຫ້ເຕັມ ຄືໃນທຸຕິຍະວັກ)

**ສຸຂະທຸກຂີສູດທີ ໔໕ ຈົບ**

# ໔໖. ອະທຸກຂະມະສຸຂີສູດ

## ວ່າດ້ວຍອັດຕາທີ່ບໍ່ມີທັງທຸກແລະສຸກ

[໔໗໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຢຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກ ບໍ່ສະຫຼາຍໄປ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີ ພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຢຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ເມື່ອມີເວທະນາ ໆລໆ
ເມື່ອມີສັນຍາ ໆລໆ
ເມື່ອມີສັງຂານ ໆລໆ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ໆລໆ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ເມື່ອມີສິ່ງນັ້ນ ຍ້ອນຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກ ແລະສຸກບໍ່ສະຫຼາຍໄປ

ເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ໆລໆ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈະເພິ່ງເກີດຂຶ້ນໄດ້ບໍວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ດ້ວຍປະການແນວນີ້ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ເມື່ອມີສິ່ງນັ້ນ ຍ້ອນຖືໝັ້ນສິ່ງນັ້ນ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

**ອະທຸກຂະມະສຸຂີສູດທີ ໔໖ ຈົບ**

**ຕະຕິຍະຄົມນວັກທີ ໕ ຈົບ**

# ໔. ຈະຕຸດຖະຄະມະນະວັກ

## ໝວດວ່າດ້ວຍການໄປທີ ໔

## ໑. ນະວາຕະສູດ

### ວ່າດ້ວຍທິດຖິວ່າລົມບໍ່ພັດເປັນຕົ້ນ

[໔໗໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ແມ່ນ້ຳບໍ່ໄຫຼ ສະຕີຖືພາບໍ່ເກີດ ດວງຈັນແລະດວງອາທິດບໍ່ຂຶ້ນບໍ່ຕົກ ໝັ້ນຄົງຄືເສົາຣະນຽດ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ເມື່ອມີເວທະນາ ຯລຯ<br>
ເມື່ອມີສັນຍາ ຯລຯ<br>
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ລົມບໍ່ພັດ ຯລຯ ໝັ້ນຄົງຄືເສົາຣະນຽດ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?<br>
ບໍ່ທ່ຽງ ຂ້ານ້ອຍ<br>
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?<br>
ເປັນທຸກ ຂ້ານ້ອຍ<br>
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ<br>
ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ແນວໃດແນວໜຶ່ງ ฯລฯ

ສັນຍາ ແນວໃດແນວໜຶ່ງ ฯລฯ

ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ฯລฯ

ວິນຍານ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ນະວາຕະສູດທີ 1 ຈົບ**

[໔໗໗-໖໐໐] (ເພິ່ງຕື່ມສູດອີກ ໔໘ ສູດ ເຂົ້າມາໃຫ້ເຕັມ ຄືໃນທຸຕິຍະວັກ)

**ສຸຂະທຸກຂີສູດທີ ໔໕ ຈົບ**

# ໔໖. ອະທຸກຂະມະສຸຂີສູດ

## ວ່າດ້ວຍທິດຖິວ່າອັດຕາທີ່ບໍ່ມີທັງທຸກແລະສຸກ

[໖໐໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມວ່າ ພິກຂຸທັງຫຼາຍ ເມື່ອມີອັນໃດ ຍ້ອນຖືໝັ້ນອັນໃດ ຍ້ອນຍຶດໝັ້ນອັນໃດ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຮູບ ຍ້ອນຖືໝັ້ນຮູບ ຍ້ອນຍຶດໝັ້ນຮູບ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ເມື່ອມີເວທະນາ ຯລຯ
ເມື່ອມີສັນຍາ ຯລຯ
ເມື່ອມີສັງຂານ ຯລຯ

ເມື່ອມີວິນຍານ ຍ້ອນຖືໝັ້ນວິນຍານ ຍ້ອນຍຶດໝັ້ນວິນຍານ ທິດຖິແນວນີ້ຈຶ່ງເກີດຂຶ້ນວ່າ ຫຼັງຈາກຕາຍແລ້ວ ອັດຕາທີ່ບໍ່ມີທັງທຸກແລະສຸກບໍ່ສະຫຼາຍໄປ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ຮູບແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ

ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ຮູບທັງໝົດນັ້ນທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາ ແນວໃດແນວໜຶ່ງ ຯລຯ
ສັນຍາ ແນວໃດແນວໜຶ່ງ ຯລຯ
ສັງຂານ ເຫຼົ່າໃດເຫຼົ່າໜຶ່ງ ຯລຯ

ວິນຍານ ແນວໃດແນວໜຶ່ງ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ໄກຫຼືໃກ້ກໍຕາມ ວິນຍານທັງໝົດນັ້ນ ທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອະທຸກຂະມະສຸຂີສູດທີ ໔໖ ຈົບ**

**ໃນວັກກ່ອນມີການຕອບບັນຫາ ໑໘ ຂໍ້**

ເພິ່ງຂະຫຍາຍພຣະສູດ ໔໖ ສູດ ໃນທຸຕິຍະຄະມະນະວັກໃຫ້ພິດສະດານ

ເພິ່ງຂະຫຍາຍພຣະສູດ ໔໖ ສູດ ໃນຕະຕິຍະຄະມະນະວັກໃຫ້ພິດສະດານ

ເພິ່ງຂະຫຍາຍພຣະສູດ ໔໖ ສູດ ໃນຈະຕຸດຖະຄະມະນະວັກໃຫ້ພິດສະດານ

**ທິດຖິສັງຍຸດ ຈົບ**

# ໔. ໂອກັນຕະສັງຍຸດ

## ໑. ຈັກຂຸສູດ

### ວ່າດ້ວຍຈັກຂຸ

[໓໐໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຈັກຂຸ (ຕາ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ໂສຕະ (ຫູ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ
ຄານະ (ດັງ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ
ຊິວຫາ (ລີ້ນ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ
ກາຍ ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ
ມະໂນ (ໃຈ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແບບນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ກ້າວລົງສູ່ອະຣິຍະມັກ ຢັ່ງລົງສູ່ພູມຂອງສັດຕະບຸຣຸດ ຜ່ານພູມຂອງປຸຖຸຊົນໄດ້ແລ້ວ ບໍ່ຄວນເຮັດກຳທີ່ເຮັດແລ້ວໄປເກີດໃນນະຣົກ ກຳເນີດສັດເດຍຣັດສານ ຫຼື ພູມແຫ່ງເຜດ ບໍ່ສົມຄວນຕາຍຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ

ພິກຂຸທັງຫຼາຍ ທຳເຫຼົ່ານີ້ຂອງຜູ້ໃດປະຈັກແຈ້ງໂດຍຍິ່ງດ້ວຍປັນຍາແບບນີ້ ຜູ້ນີ້ເຮົາຮຽກວ່າ ທຳມານຸສາຣີ ກ້າວລົງສູ່ອະຣິຍະມັກ ຢັ່ງລົງສູ່ພູມຂອງສັດຕະບຸຣຸດ ຜ່ານພູມຂອງປຸຖຸຊົນໄດ້ແລ້ວ ບໍ່ຄວນເຮັດກຳທີ່ເຮັດແລ້ວໄປເກີດໃນນະຣົກ ກຳເນີດສັດເດຍຣັດສານ ຫຼື ພູມແຫ່ງເຜດ ບໍ່ສົມຄວນຕາຍຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ

ພິກຂຸທັງຫຼາຍ ຜູ້ໃດຮູ້ເຫັນທຳເຫຼົ່ານີ້ແບບນີ້ ຜູ້ນີ້ເຮົາຮຽກວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ຈັກຂຸສູດທີ ໑ ຈົບ**

# ໘. ຣູບສູດ

## ວ່າດ້ວຍຣູບ

[໓໐໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຣູບບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ສັດທະ (ສຽງ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ຄັນທະ (ກິ່ນ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ຣົດບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ໂຜດຖັບພະ (ສິ່ງທີ່ຖືກຕ້ອງກາຍ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ທຳມາຣົມບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແນວນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ກ້າວລົງສູ່ອະຣິຍະມັກ ຢັ່ງລົງສູ່ພູມຂອງສັດຕະບຸຣຸດ ຜ່ານພູມຂອງປຸຖຸຊົນໄດ້ແລ້ວ ບໍ່ຄວນເຮັດກຳທີ່ເຮັດແລ້ວໄປເກີດໃນນະຣົກ ກຳເນີດສັດເດຍຣັດສານ ຫຼື ພູມແຫ່ງເຜດ ບໍ່ສົມຄວນຕາຍຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ

ພິກຂຸທັງຫຼາຍ ທຳເຫຼົ່ານີ້ຂອງຜູ້ໃດປະຈັກແຈ້ງໂດຍຍິ່ງດ້ວຍປັນຍາແນວນີ້ ຜູ້ນີ້ເຮົາຮຽກວ່າ ທຳມານຸສາຣີ ກ້າວລົງສູ່ອະຣິຍະມັກ ຢັ່ງລົງສູ່ພູມຂອງສັດຕະບຸຣຸດ ຜ່ານພູມຂອງປຸຖຸຊົນໄດ້ແລ້ວ ບໍ່ຄວນເຮັດກຳທີ່ເຮັດແລ້ວໄປເກີດໃນນະຣົກ ກຳເນີດສັດເດຍຣັດສານ ຫຼື ພູມແຫ່ງເຜດ ບໍ່ສົມຄວນຕາຍຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ

ພິກຂຸທັງຫຼາຍ ຜູ້ໃດຮູ້ເຫັນທຳເຫຼົ່ານີ້ແນວນີ້ ຜູ້ນີ້ເຮົາຮຽກວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ຣູບສູດທີ ໘ ຈົບ**

# ໙. ວິນຍານສູດ

## ວ່າດ້ວຍວິນຍານ

[໓໐໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຈັກຂຸວິນຍານ (ຄວາມຮູ້ອາລົມທາງຕາ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ໂສຕະວິນຍານ (ຄວາມຮູ້ອາລົມທາງຫູ) ฯลฯ
ຄານະວິນຍານ (ຄວາມຮູ້ອາລົມທາງດັງ) ฯลฯ
ຊິວຫາວິນຍານ (ຄວາມຮູ້ອາລົມທາງລີ້ນ) ฯลฯ
ກາຍວິນຍານ (ຄວາມຮູ້ອາລົມທາງກາຍ) ฯลฯ
ມະໂນວິນຍານ (ຄວາມຮູ້ອາລົມທາງໃຈ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດ ฯลฯ ຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ
ພິກຂຸທັງຫຼາຍ ທຳເຫຼົ່ານີ້ຂອງຜູ້ໃດ ฯลฯ ຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ
ພິກຂຸທັງຫຼາຍ ຜູ້ໃດ ฯลฯ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ວິນຍານສູດທີ ໓ ຈົບ**

# ໔. ສຳຜັດສະສູດ

## ວ່າດ້ວຍສຳຜັດ

[໓໐໕] ເລື້ອງເກີດຂື້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຈັກຂຸສຳຜັດ (ຄວາມກະທົບທາງຕາ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ໂສຕະສຳຜັດ (ຄວາມກະທົບທາງຫູ) ฯลฯ
ຄານະສຳຜັດ (ຄວາມກະທົບທາງດັງ) ฯลฯ
ຊິວຫາສຳຜັດ (ຄວາມກະທົບທາງລີ້ນ) ฯลฯ
ກາຍສຳຜັດ (ຄວາມກະທົບທາງກາຍ) ฯลฯ
ມະໂນສຳຜັດ (ຄວາມກະທົບທາງໃຈ) ບໍ່ທ່ຽງມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແບບນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ฯลฯ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ສຳຜັດສະສູດທີ ໔ ຈົບ**

# ໕. ສຳຜັດສະຊາສູດ

## ວ່າດ້ວຍສຳຜັດສະຊາເວທະນາ

[໓໐໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຈັກຂຸສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງຕາ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ໂສຕະສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງຫູ) ຯລຯ

ຄານະສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງດັງ) ຯລຯ

ຊິວຫາສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງລີ້ນ) ຯລຯ

ກາຍສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງກາຍ) ຯລຯ

ມະໂນສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງໃຈ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແບບນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ຯລຯ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ສຳຜັດສະຊາສູດທີ ໕ ຈົບ**

# ໖. ຣູບສັນຍາສູດ

## ວ່າດ້ວຍຣູບສັນຍາ

[໓໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຣູບສັນຍາ (ຄວາມໝາຍຮູ້ຮູບ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ສັດທະສັນຍາ (ຄວາມໝາຍຮູ້ສຽງ) ຯລຯ

ຄັນທະສັນຍາ (ຄວາມໝາຍຮູ້ກິ່ນ) ຯລຯ

ຣະສະສັນຍາ (ຄວາມໝາຍຮູ້ຣົດ) ຯລຯ

ໂຜດຖັບພະສັນຍາ (ຄວາມໝາຍຮູ້ໂຜດຖັບພະ) ຯລຯ

ທຳມະສັນຍາ (ຄວາມໝາຍຮູ້ທຳມາຣົມ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແບບນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ຯລຯ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ຣູບສັນຍາສູດທີ ໖ ຈົບ**

# ໗. ຣູບສັນເຈຕະນາສູດ

## ວ່າດ້ວຍຣູບສັນເຈຕະນາ

[໓໐໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຣູບສັນເຈຕະນາ (ຄວາມຈຳນົງຣູບ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ສັທທະສັນເຈຕະນາ (ຄວາມຈຳນົງສຽງ) ຯລຯ
ຄັນທະສັນເຈຕະນາ (ຄວາມຈຳນົງກິ່ນ) ຯລຯ
ຣົດສັນເຈຕະນາ (ຄວາມຈຳນົງຣົດ) ຯລຯ
ໂຜຕທັບພະສັນເຈຕະນາ (ຄວາມຈຳນົງໂຜດຖັບພະ) ຯລຯ
ທຳມະສັນເຈຕະນາ (ຄວາມຈຳນົງທຳມາຣົມ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແບບນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ຯລຯ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ຣູບສັນເຈຕະນາສູດທີ ໗ ຈົບ**

# ໘. ຣູບຕັນຫາສູດ

## ວ່າດ້ວຍຣູບຕັນຫາ

[໓໐໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຣູບຕັນຫາ (ຄວາມທະຍານຢາກໃນຣູບ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ສັດທະຕັນຫາ (ຄວາມທະຍານຢາກໃນສຽງ) ຯລຯ
ຄັນທະຕັນຫາ (ຄວາມທະຍານຢາກໃນກິ່ນ) ຯລຯ
ຣະສະຕັນຫາ (ຄວາມທະຍານຢາກໃນຣົດ) ຯລຯ
ໂຜດຖັບພະຕັນຫາ (ຄວາມທະຍານຢາກໃນໂຜດຖັບພະ) ຯລຯ
ທຳມະຕັນຫາ (ຄວາມທະຍານຢາກໃນທຳມາຣົມ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແນວນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ຯລຯ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ຣູບຕັນຫາສູດທີ ๙ ຈົບ**

# ໑. ປະຖະວີທາຕຸສູດ

## ວ່າດ້ວຍປະຖະວີທາດ

[๓๑๐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປະຖະວີທາດ (ທາດດິນ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ອາໂປທາດ (ທາດນ້ຳ) ຯລຯ
ເຕໂຊທາດ (ທາດໄຟ) ຯລຯ
ວາໂຍທາດ (ທາດລົມ) ຯລຯ
ອາກາສທາດ (ທາດອາກາດ) ຯລຯ
ວິນຍານທາດ (ທາດວິນຍານ) ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແນວນີ້ ຜູ້ນີ້ເຮົາຮຽກວ່າ ສັດທານຸສາຣີ ຯລຯ ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ປະຖະວີທາຕຸສູດທີ ໑ ຈົບ**

# ໑໐. ຂັນທະສູດ
## ວ່າດ້ວຍຂັນ

[໓໑໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ເວທະນາບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ສັນຍາ ຯລຯ

ສັງຂານບໍ່ທ່ຽງ ຯລຯ

ວິນຍານບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຜູ້ໃດສັດທາເຊື່ອໝັ້ນທຳເຫຼົ່ານີ້ແນວນີ້ ຜູ້ນີ້ເຮົາຮຽກ ວ່າ ສັດທານຸສາຣີ ກ້າວລົງສູ່ອະຣິຍະມັກ ຢັ່ງລົງສູ່ພູມຂອງສັດຕະບຸຣຸດ ຜ່ານພູມຂອງປຸຖຸຊົນໄດ້ແລ້ວ ບໍ່ຄວນເຮັດກຳທີ່ເຮັດແລ້ວໄປເກີດໃນນະຣົກ ກຳເນີດສັດເດຍຣັດສານ ຫຼື ພູມແຫ່ງເຜດ ບໍ່ສົມຄວນຕາຍຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ

ພິກຂຸທັງຫຼາຍ ທຳເຫຼົ່ານີ້ ຂອງຜູ້ໃດປະຈັກແຈ້ງໂດຍຍິ່ງດ້ວຍປັນຍາແນວນີ້ ຜູ້ນີ້ເຮົາຮຽກວ່າ ທຳມານຸສາຣີ ກ້າວລົງສູ່ອະຣິຍະມັກ ຢັ່ງລົງສູ່ພູມຂອງສັດຕະບຸຣຸດ ຜ່ານພູມຂອງປຸຖຸຊົນໄດ້ແລ້ວ ບໍ່ຄວນເຮັດກຳທີ່ເຮັດແລ້ວໄປເກີດໃນນະຣົກ ກຳເນີດສັດເດຍຣັດສານ ຫຼື ພູມແຫ່ງເຜດບໍ່ສົມຄວນຕາຍຕາບທໍ່ທີ່ຍັງບໍ່ເຮັດໃຫ້ແຈ້ງໂສດາປັດຕິຜົນ

ພິກຂຸທັງຫຼາຍ ຜູ້ໃດຮູ້ເຫັນທຳເຫຼົ່ານີ້ແນວນີ້ ຜູ້ນີ້ເຮົາຮຽກວ່າ ອະຣິຍະສາວົກຜູ້ເປັນໂສດາບັນບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ຂ້າງໜ້າ

**ຂັນທະສູດທີ ໑໐ ຈົບ**

**ໂອກກັນຕະສັງຍຸດ ຈົບ**

## ລວມພຣະສູດທີ ມີໃນສັງຍຸດນີ້ ຄື

# ໕. ອຸປາທະສັງຍຸດ

## ໑. ຈັກຂຸສູດ

### ວ່າດ້ວຍຈັກຂຸ

[໓໑໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງຈັກຂຸ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ฯລฯ ແຫ່ງໂສຕະ ฯລฯ
ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ฯລฯ ແຫ່ງຄານະ ฯລฯ
ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ฯລฯ ແຫ່ງຊິວຫາ ฯລฯ
ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ฯລฯ ແຫ່ງກາຍ ฯລฯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງມະໂນ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຈັກຂຸ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ฯລฯ ແຫ່ງໂສຕະ ฯລฯ
ຄວາມດັບ ฯລฯ ແຫ່ງຄານະ ฯລฯ
ຄວາມດັບ ฯລฯ ແຫ່ງຊິວຫາ ฯລฯ
ຄວາມດັບ ฯລฯ ແຫ່ງກາຍ ฯລฯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງມະໂນ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ຈັກຂຸສູດທີ ໑ ຈົບ**

# ໘. ຮູບສູດ

## ວ່າດ້ວຍຮູບ

[໓໑໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງຮູບ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງສັດທະ ຯລຯ ແຫ່ງຄັນທະ ຯລຯ ແຫ່ງຣົດ ຯລຯ ແຫ່ງໂຜດຖັບພະ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງທຳມາຣົມ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຮູບ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງສັດທະ ຯລຯ ແຫ່ງຄັນທະ ຯລຯ ແຫ່ງຣົດ ຯລຯ ແຫ່ງໂຜດຖັບພະ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງທຳມາຣົມ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ຮູບສູດທີ ໘ ຈົບ**

# ໓. ວິນຍານສູດ

## ວ່າດ້ວຍວິນຍານ

[໓໑໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງຈັກຂຸວິນຍານ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງມະໂນວິນຍານ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຯລຯ ແຫ່ງຈັກຂຸວິນຍານ ຯລຯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ ຯລຯ

ຄວາມດັບ ຯລຯ ແຫ່ງມະໂນວິນຍານ ຯລຯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ວິນຍານສູດທີ ໓ ຈົບ**

# ໔. ສໍາຜັດສະສູດ

## ວ່າດ້ວຍສໍາຜັດ

[໓໑໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງຈັກຂຸສໍາຜັດ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງມະໂນສໍາຜັດ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຯລຯ ແຫ່ງຈັກຂຸສໍາຜັດ ຯລຯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ ຯລຯ

ຄວາມດັບ ຯລຯ ແຫ່ງມະໂນສໍາຜັດ ຯລຯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ສໍາຜັດສະສູດທີ ໔ ຈົບ**

# ໕. ສໍາຜັດສະຊາສູດ

## ວ່າດ້ວຍສໍາຜັດສະຊາເວທະນາ

[໓໑໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງຈັກຂຸສຳຜັດສະຊາເວທະນາ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງມະໂນສຳຜັດສະຊາ ເວທະນາ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍ ລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຯລຯ ແຫ່ງຈັກຂຸສຳຜັດສະຊາເວທະນາ ຯລຯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງມະໂນສຳຜັດສະຊາເວທະນາ ຯລຯ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ສຳຜັດສະຊາສູດທີ ๕ ຈົບ**

# ๖. ສັນຍາສູດ

## ວ່າດ້ວຍສັນຍາ

[๓໑๓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງຮູບສັນຍາ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ ຯລຯ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ

ຄວາມຜາກົດແຫ່ງທຳມະສັນຍາ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຯລຯ ແຫ່ງຮູບສັນຍາ ຯລຯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງທຳມະສັນຍາ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ສັນຍາສູດທີ ๖ ຈົບ**

# ໗. ສັນເຈຕະນາສູດ

## ວ່າດ້ວຍສັນເຈຕະນາ

[໓໑໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງຮູບສັນເຈຕະນາ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງທຳມະສັນເຈຕະນາ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຯລຯ ແຫ່ງຮູບສັນເຈຕະນາ ຯລຯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງທຳມະສັນເຈຕະນາ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ສັນເຈຕະນາສູດທີ ໗ ຈົບ**

# ໘. ຕັນຫາສູດ

## ວ່າດ້ວຍຕັນຫາ

[໓໑໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງຮູບຕັນຫາ ຯລຯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງທຳມະຕັນຫາ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ฯລฯ ແຫ່ງຮູບຕັນຫາ ฯລฯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ ฯລฯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງທຳມະຕັນຫາ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ຕັນຫາສູດທີ ๙ ຈົບ**

## ໑. ທາຕຸສູດ

### ວ່າດ້ວຍທາດ

[໓໔໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງປະຖະວີທາດ ฯລฯ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ ฯລฯ ແຫ່ງອາໂປທາດ ฯລฯ ແຫ່ງເຕໂຊທາດ ฯລฯ ແຫ່ງວາໂຍທາດ ฯລฯ ແຫ່ງອາກາດທາດ ฯລฯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງວິນຍານທາດ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ฯລฯ ແຫ່ງປະຖະວີທາດ ฯລฯ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ฯລฯ ແຫ່ງອາໂປທາດ ฯລฯ
ຄວາມດັບ ฯລฯ ແຫ່ງເຕໂຊທາດ ฯລฯ
ຄວາມດັບ ฯລฯ ແຫ່ງວາໂຍທາດ ฯລฯ
ຄວາມດັບ ฯລฯ ແຫ່ງອາກາສທາດ ฯລฯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງວິນຍານທາດ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ທາຕຸສູດທີ ໑ ຈົບ**

# ໑໐. ຂັນທະສູດ

## ວ່າດ້ວຍຂັນ

[໓໔໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງຮູບ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຯລຯ ແຫ່ງເວທະນາ ຯລຯ ແຫ່ງສັນຍາ ຯລຯ ແຫ່ງສັງຂານ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງວິນຍານ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຮູບ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ຄວາມສະງົບລະງັບ ຯລຯ ແຫ່ງເວທະນາ ຯລຯ ແຫ່ງສັນຍາ ຯລຯ ແຫ່ງສັງຂານ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງວິນຍານ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

**ຂັນທະສູດທີ ໑໐ ຈົບ**

**ອຸບປາທະສັງຍຸດ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

# ໓. ກິເລສະສັງຍຸດ

## ໑. ຈັກຂຸສູດ

### ວ່າດ້ວຍຈັກຂຸ

[໓໔໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຈັກຂຸ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ໂສຕະ ນີ້ເປັນຄວາມເສົ້າໝອງແຫ່ງຈິດ
ສັນທະຣາຄະໃນ ຄານະ ນີ້ເປັນຄວາມເສົ້າໝອງແຫ່ງຈິດ
ສັນທະຣາຄະໃນ ຊິວຫາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ
ສັນທະຣາຄະໃນ ກາຍ ນີ້ເປັນຄວາມເສົ້າໝອງແຫ່ງຈິດ
ສັນທະຣາຄະໃນ ມະໂນ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະຄວາມເສົ້າໝອງແຫ່ງຈິດໃນຖານະ ໖ ປະການນີ້ໄດ້ ເມື່ອນັ້ນ ຈິດຂອງທ່ານທີ່ນ້ອມໄປໃນເນກຂຳມະ ອັນເນກຂຳມະອົບຮົມແລ້ວ ຄວນແກ່ການງານ ຜາກົດໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ຈັກຂຸສູດທີ ໑ ຈົບ**

## ໒. ຣູບສູດ

### ວ່າດ້ວຍຣູບ

[໓໔໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຣູບ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ສັດທະ ຯລຯ
ສັນທະຣາຄະໃນ ຄັນທະ ຯລຯ
ສັນທະຣາຄະໃນ ຣົດ ຯລຯ

ສັນທະຣາຄະໃນ  ໂຜດຖັບພະ  ฯລฯ
ສັນທະຣາຄະໃນທຳມາຣົມ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະຄວາມເສົ້າໝອງແຫ່ງຈິດໃນຖານະ ໖ ປະການນີ້ໄດ້ ເມື່ອນັ້ນ ຈິດຂອງທ່ານທີ່ນ້ອມໄປໃນເນກຂຳມະ ອັນເນກຂຳມະອົບຮົມແລ້ວ ຄວນແກ່ການງານ ຜາກົດໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ຮູບສູດທີ ໘ ຈົບ**

# ໓. ວິນຍານສູດ

## ວ່າດ້ວຍວິນຍານ

[໓໘໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຈັກຂຸວິນຍານ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ  ໂສຕະວິນຍານ  ฯລฯ
ສັນທະຣາຄະໃນ  ຄານະວິນຍານ  ฯລฯ
ສັນທະຣາຄະໃນ  ຊິວຫາວິນຍານ  ฯລฯ
ສັນທະຣາຄະໃນ  ກາຍວິນຍານ  ฯລฯ
ສັນທະຣາຄະໃນ  ມະໂນວິນຍານ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະຄວາມເສົ້າໝອງແຫ່ງຈິດໃນຖານະ ໖ ປະການນີ້ໄດ້ ເມື່ອນັ້ນ ຈິດຂອງທ່ານທີ່ນ້ອມໄປໃນເນກຂຳມະ ອັນເນກຂຳມະອົບຮົມແລ້ວ ຄວນແກ່ການງານ ຜາກົດໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ວິນຍານສູດທີ ໓ ຈົບ**

# ໔. ສຳຜັດສະສູດ

## ວ່າດ້ວຍສຳຜັດ

[໓໘໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຈັກຂຸສຳຜັດ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ໂສຕະສຳຜັດ ຯລຯ

ສັນທະຣາຄະໃນ ຄານະສຳຜັດ ຯລຯ

ສັນທະຣາຄະໃນ ຊິວຫາສຳຜັດ ຯລຯ

ສັນທະຣາຄະໃນ ກາຍສຳຜັດ ຯລຯ

ສັນທະຣາຄະໃນ ມະໂນສຳຜັດ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸ ຯລຯ ໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ສຳຜັດສະສູດທີ ໔ ຈົບ**

# ໕. ສຳຜັດສະຊາສູດ

## ວ່າດ້ວຍສຳຜັດສະຊາເວທະນາ

[໓໔໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຈັກຂຸສຳຜັດສະຊາເວທະນານີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ໂສຕະສຳຜັດສະຊາເວທະນາ ຯລຯ

ສັນທະຣາຄະໃນ ຄານະສຳຜັດສະຊາເວທະນາ ຯລຯ

ສັນທະຣາຄະໃນ ຊິວຫາສຳຜັດສະຊາເວທະນາ ຯລຯ

ສັນທະຣາຄະໃນ ກາຍສຳຜັດສະຊາເວທະນາ ຯລຯ

ສັນທະຣາຄະໃນ ມະໂນສຳຜັດສະຊາເວທະນາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸ ຯລຯ ໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ສຳຜັດສະຊາສູດທີ ໕ ຈົບ**

# ໖. ສັນຍາສູດ

## ວ່າດ້ວຍສັນຍາ

[໓໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຮູບສັນຍາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ສັດທະສັນຍາ ຯລຯ

ສັນທະຣາຄະໃນ ຄັນທະສັນຍາ ຯລຯ

ສັນທະຣາຄະໃນ ຣະສະສັນຍາ ຯລຯ

ສັນທະຣາຄະໃນ ໂຜດຖັບພະສັນຍາ ຯລຯ

ສັນທະຣາຄະໃນ ທຳມະສັນຍາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸ ຯລຯ ໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ສັນຍາສູດທີ ໖ ຈົບ**

## ໗. ສັນເຈຕະນາສູດ

### ວ່າດ້ວຍສັນເຈຕະນາ

[໓໔໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຮູບສັນເຈຕະນາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ສັດທະສັນເຈຕະນາ ຯລຯ

ສັນທະຣາຄະໃນ ຄັນທະສັນເຈຕະນາ ຯລຯ

ສັນທະຣາຄະໃນ ຣົດສັນເຈຕະນາ ຯລຯ

ສັນທະຣາຄະໃນ ໂຜຕທັບພະສັນເຈຕະນາ ຯລຯ

ສັນທະຣາຄະໃນ ທຳມະສັນເຈຕະນາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸ ຯລຯ ໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ສັນເຈຕະນາສູດທີ ໗ ຈົບ**

## ໘. ຕັນຫາສູດ

### ວ່າດ້ວຍຕັນຫາ

[໓໔໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຮູບຕັນຫາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ສັດທະຕັນຫາ ຯລຯ
ສັນທະຣາຄະໃນ ຄັນທະຕັນຫາ ຯລຯ
ສັນທະຣາຄະໃນ ຣະສະຕັນຫາ ຯລຯ
ສັນທະຣາຄະໃນ ໂຜດຖັບພະຕັນຫາ ຯລຯ
ສັນທະຣາຄະໃນ ທຳມະຕັນຫາ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸ ຯລຯ ໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ຕັນຫາສູດທີ ໗ ຈົບ**

# ໘. ທາຕຸສູດ

## ວ່າດ້ວຍທາດ

[໓໓໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນປະຖະວີທາດ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ສັນທະຣາຄະໃນ ອາໂປທາດ ຯລຯ
ສັນທະຣາຄະໃນ ເຕໂຊທາດ ຯລຯ
ສັນທະຣາຄະໃນ ວາໂຍທາດ ຯລຯ
ສັນທະຣາຄະໃນ ອາກາສທາດ ຯລຯ
ສັນທະຣາຄະໃນ ວິນຍານທາດ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະຄວາມເສົ້າໝອງແຫ່ງຈິດໃນຖານະ ໖ ປະການນີ້ໄດ້ ເມື່ອນັ້ນ ຈິດຂອງທ່ານທີ່ນ້ອມໄປໃນເນກຂຳມະ ອັນເນກຂຳມະອົບຮົມແລ້ວ ຄວນແກ່ການງານ ຜາກົດໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ທາຕຸສູດທີ ໘ ຈົບ**

# ໑໐. ຂັນທະສູດ

## ວ່າດ້ວຍຂັນ

[໓໓໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັນທະຣາຄະໃນຣູບ ນີ້ເປັນຄວາມເສົ້າໝອງແຫ່ງຈິດ ຯລຯ ສັນທະຣາຄະໃນວິນຍານ ນີ້ເປັນຄວາມເສົ້າໝອງແຫ່ງຈິດ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸລະຄວາມເສົ້າໝອງແຫ່ງຈິດໃນຖານະ ໖ ປະການນີ້ໄດ້ ເມື່ອນັ້ນ ຈິດຂອງທ່ານທີ່ນ້ອມໄປໃນເນກຂຳມະ ອັນເນກຂຳມະອົບຮົມແລ້ວ ຄວນແກ່ການງານ ຜາກົດໃນທຳທີ່ຄວນເຮັດໃຫ້ແຈ້ງດ້ວຍປັນຍາອັນຮູ້ຍິ່ງ

**ຂັນທະສູດທີ ໑໐ ຈົບ**

**ກິເລສະສັງຍຸດ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

# ໗. ສາຣີປຸດຕະສັງຍຸດ

## ໑. ວິເວກະຊະສູດ

### ວ່າດ້ວຍປະຖົມຊານມີປີຕິແລະສຸກອັນເກີດຈາກວິເວກ

[໓໓໔] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ເຂົ້າໄປສູ່ປ່າອັນທະວັນເພື່ອພັກກາງເວັນ ເຖິງປ່າອັນທະວັນແລ້ວນັ່ງພັກຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ

ຕໍ່ມາເວລາແລງ ທ່ານພຣະສາຣີບຸດອອກຈາກທີ່ຫຼີບຫຼີກແລ້ວ ເຂົ້າໄປສູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ທ່ານພຣະອານົນໄດ້ເຫັນທ່ານພຣະສາຣີບຸດກຳລັງຍ່າງມາແຕ່ໄກຈຶ່ງຖາມວ່າ ທ່ານສາຣີບຸດ ອິນຊີຂອງທ່ານຜ່ອງໃສຫຼາຍ ສີໜ້າກໍບໍລິສຸດຜຸດຜ່ອງ ມື້ນີ້ທ່ານສາຣີບຸດຢູ່ດ້ວຍວິຫານທຳອັນໃດ?

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ມື້ນີ້ ຂ້ານ້ອຍສະຫງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວເຂົ້າປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ຂ້ານ້ອຍນັ້ນບໍ່ໄດ້ຄິດວ່າ ເຮົາເຂົ້າປະຖົມຊານຢູ່ ຫຼືເຂົ້າປະຖົມຊານແລ້ວ ຫຼື ອອກຈາກປະຖົມຊານແລ້ວ

ອັນແທ້ຈິງ ທ່ານພຣະສາຣີບຸດຖອນອະຫັງການ ມະມັງການ ແລະມານານຸໄສອອກໄດ້ດົນແລ້ວ ສັນນັ້ນ ທ່ານພຣະສາຣີບຸດຈຶ່ງບໍ່ຄິດວ່າ ເຮົາເຂົ້າປະຖົມຊານຢູ່ ຫຼື ເຂົ້າປະຖົມຊານແລ້ວ ຫຼື ອອກຈາກປະຖົມຊານແລ້ວ

**ວິເວກະຊະສູດທີ ໑ ຈົບ**

## ໒. ອະວິຕັກກະສູດ

### ວ່າດ້ວຍທຸຕິຍະຊານບໍ່ມີວິຕົກ

[໓໓໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະອານົນໄດ້ເຫັນ ຯລຯ ຈຶ່ງຖາມວ່າ ທ່ານສາຣີບຸດ ອິນຊີຂອງທ່ານຜ່ອງໃສຫຼາຍ ສີໜ້າກໍບໍລິສຸດຜຸດຜ່ອງ ມື້ນີ້ ທ່ານສາຣີບຸດຢູ່ດ້ວຍວິຫານທຳອັນໃດ?

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ຍ້ອນວິຕົກວິຈານສະງົບລະງັບໄປ ມື້ນີ້ ຂ້ານ້ອຍເຂົ້າທຸຕິຍະຊານມີຄວາມຜ່ອງໃສໃນຈິດພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກເກີດຈາກສະມາທິຢູ່ ຂ້ານ້ອຍນັ້ນບໍ່ໄດ້ຄິດວ່າ ເຮົາເຂົ້າທຸຕິຍະຊານຢູ່ ຫຼື ເຂົ້າທຸຕິຍະຊານແລ້ວ ຫຼື ອອກຈາກທຸຕິຍະຊານແລ້ວ

ອັນແທ້ຈິງ ທ່ານພຣະສາຣີບຸດຖອນອະຫັງການ ມະມັງການ ແລະມານານຸໄສອອກໄດ້ດົນແລ້ວ ສັນນັ້ນ ທ່ານຈຶ່ງບໍ່ຄິດວ່າ ເຮົາເຂົ້າທຸຕິຍະຊານຢູ່ ຫຼື ເຂົ້າທຸຕິຍະຊານແລ້ວ ຫຼື ອອກຈາກທຸຕິຍະຊານແລ້ວ

**ອະວິຕັກກະສູດທີ ໘ ຈົບ**

# ໙. ປີຕິສູດ

## ວ່າດ້ວຍຕະຕິຍະຊານທີ່ມີປີຕິ

[໓໓໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະອານົນໄດ້ເຫັນ ຯລຯ ຈຶ່ງຖາມວ່າ ທ່ານສາຣີບຸດ ອິນຊີຂອງທ່ານຜ່ອງໃສຫຼາຍ ສີໜ້າບໍລິສຸດຜຸດຜ່ອງ ມື້ນີ້ ທ່ານສາຣີບຸດຢູ່ດ້ວຍວິຫານທຳອັນໃດ?

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ຍ້ອນປີຕິຈາງຄາຍອອກ ມື້ນີ້ ຂ້ານ້ອຍມີອຸເປກຂາ ມີສະຕິສຳປະຊັນຍະ ແລະ ສະເຫວີຍສຸກດ້ວຍນາມກາຍຢູ່ ເຂົ້າຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຂ້ານ້ອຍນັ້ນບໍ່ໄດ້ຄິດວ່າ ເຮົາເຂົ້າຕະຕິຍະຊານຢູ່ ຫຼື ເຂົ້າຕະຕິຍະຊານແລ້ວ ຫຼື ອອກຈາກຕະຕິຍະຊານແລ້ວອັນແທ້ຈິງ ທ່ານພຣະສາຣີບຸດຖອນອະຫັງການ ມະມັງການ ແລະມານານຸໄສອອກໄດ້ດົນແລ້ວ ສັນນັ້ນ ທ່ານຈຶ່ງບໍ່ຄິດວ່າ ເຮົາເຂົ້າຕະຕິຍະຊານຢູ່ ຫຼື ເຂົ້າຕະຕິຍະຊານແລ້ວ ຫຼື ອອກຈາກຕະຕິຍະຊານແລ້ວ

**ປີຕິສູດທີ ໙ ຈົບ**

# ໔. ອຸເປກຂາສູດ

## ວ່າດ້ວຍຈະຕຸດຖະຊານທີ່ມີສະຕິບໍລິສຸດຍ້ອນອຸເປກຂາ

[໓໓໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະອານົນໄດ້ເຫັນ ຯລຯ ຈຶ່ງຖາມວ່າ ທ່ານສາຣີບຸດ ອິນຊີຂອງທ່ານຜ່ອງໃສຫຼາຍ ສີໜ້າກໍບໍລິສຸດຜຸດຜ່ອງ ມື້ນີ້ ທ່ານສາຣີບຸດຢູ່ດ້ວຍວິຫານທຳອັນໃດ?

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະ ໂທມະນັດດັບໄປກ່ອນແລ້ວ ມື້ນີ້ ຂ້ານ້ອຍເຂົ້າຈະຕຸດຖະຊານບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດ ຍ້ອນອຸເປກຂາຢູ່ ຂ້ານ້ອຍນັ້ນບໍ່ໄດ້ຄິດວ່າ ເຮົາເຂົ້າຈະຕຸດຖະຊານຢູ່ ຫຼື ເຂົ້າຈະຕຸດຖະຊານແລ້ວ ຫຼື ອອກຈາກຈະຕຸດຖະຊານແລ້ວ

ອັນແທ້ຈິງ ທ່ານພຣະສາຣີບຸດຖອນອະຫັງການ ມະມັງການ ແລະ ມານານຸໄສອອກໄດ້ ດົນແລ້ວ ສັນນັ້ນ ທ່ານຈຶ່ງບໍ່ຄິດວ່າ ເຮົາເຂົ້າຈະຕຸດຖະຊານຢູ່ ຫຼື ເຂົ້າຈະຕຸດຖະຊານແລ້ວ ຫຼື ອອກຈາກຈະຕຸດຖະຊານແລ້ວ

**ອຸເປກຂາສູດທີ ໔ ຈົບ**

# ໕. ອາກາສານັນຈາຍະຕະນະສູດ

## ວ່າດ້ວຍອາກາສານັນຈາຍະຕະນະຊານ

[໓໓໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະອານົນໄດ້ເຫັນ ຯລຯ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ມື້ນີ້ ຂ້ານ້ອຍເຂົ້າອາກາສານັນຈາຍະຕະນະ ຊານ (ຊານອັນກຳນົດອາກາດຄືປ່ອງວ່າງຫາບ່ອນສຸດບໍ່ໄດ້ເປັນອາລົມ) ຢູ່ໂດຍກຳນົດວ່າ ອາ ກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍ ປະການທັງປວງຢູ່ ຯລຯ ຫຼື ອອກຈາກອາກາສານັນຈາຍະຕະນະຊານແລ້ວ

**ອາກາສານັນຈາຍະຕະນະສູດທີ ໕ ຈົບ**

# ໕. ວິນຍານັນຈາຍະຕະນະສູດ

## ວ່າດ້ວຍວິນຍານັນຈາຍະຕະນະຊານ

[໓໓໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ທ່ານພຣະອານົນໄດ້ເຫັນ ຯລຯ

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ມື້ນີ້ ຂ້ານ້ອຍລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງເຂົ້າວິນຍານັນຈາຍະຕະນະຊານ (ຊານອັນກຳນົດວິນຍານຫາບ່ອນສຸດບໍ່ໄດ້ເປັນອາລົມ) ໂດຍກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້ ຯລຯ ຫຼື ອອກຈາກວິນຍານັນຈາຍະຕະນະຊານແລ້ວ

**ວິນຍານັນຈາຍະຕະນະສູດທີ ໕ ຈົບ**

# ໗. ອາກິນຈັນຍາຍະຕະນະສູດ

## ວ່າດ້ວຍອາກິນຈັນຍາຍະຕະນະຊານ

[໓໓໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະສາຣີບຸດ ຯລຯ ໄດ້ຕອບວ່າ ທ່ານຜູ້ມີອາຍຸ ມື້ນີ້ ຂ້ານ້ອຍລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງເຂົ້າອາກິນຈັນຍາຍະຕະນະຊານ (ຊານອັນກຳນົດພາວະທີ່ບໍ່ມີອັນໃດ ໆ ເປັນອາລົມ) ໂດຍກຳນົດວ່າ ບໍ່ມີອັນໃດ໑ ຯລຯ ຫຼື ອອກຈາກອາກິນຈັນຍາຍະຕະນະຊານແລ້ວ

**ອາກິນຈັນຍາຍະຕະນະສູດທີ ໗ ຈົບ**

# ໘. ເນວະສັນຍານາສັນຍາຍະຕະນະສູດ

## ວ່າດ້ວຍເນວະສັນຍານາສັນຍາຍະຕະນະຊານ

[໓໓໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະສາຣີບຸດ ຯລຯ ໄດ້ຕອບວ່າ ທ່ານຜູ້ມີອາຍຸ ມື້ນີ້ ຂ້ານ້ອຍລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ເຂົ້າເນວະສັນຍານາສັນຍາຍະຕະນະຊານ (ຊານອັນເຂົ້າເຖິງພາວະມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ) ຯລຯ ຫຼື ອອກຈາກເນວະສັນຍານາສັນຍາຍະຕະນະຊານແລ້ວ

**ເນວະສັນຍານາສັນຍາຍະຕະນະສູດທີ ໘ ຈົບ**

# ໙. ນິໂຣທະສະມາປັດຕິສູດ

## ວ່າດ້ວຍນິໂຣທະສະມາບັດ

[໓໔໐] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ເຂົ້າໄປສູ່ປ່າອັນທະວັນເພື່ອພັກກາງເວັນ ເຖິງປ່າອັນທະວັນແລ້ວນັ່ງພັກຢູ່ທີ່ເຫງົ້າໄມ້ແຫ່ງໜຶ່ງ

ຕໍ່ມາໃນເວລາແລງ ທ່ານພຣະສາຣີບຸດອອກຈາກທີ່ຫຼີບຫຼີກແລ້ວເຂົ້າໄປສູ່ພຣະເຊຕະວັນອາຮາມຂອງອະນາຖະບິນດິກະເສດຖີ ທ່ານພຣະອານົນໄດ້ເຫັນທ່ານພຣະສາຣີບຸດກຳລັງຍ່າງມາແຕ່ໄກຈຶ່ງຖາມວ່າ ທ່ານສາຣີບຸດ ອິນຊີຂອງທ່ານຜ່ອງໃສຫຼາຍ ສີໜ້າກໍບໍລິສຸດຜຸດຜ່ອງ ມື້ນີ້ທ່ານສາຣີບຸດຢູ່ດ້ວຍວິຫານທຳອັນໃດ?

ທ່ານພຣະສາຣີບຸດຕອບວ່າ ທ່ານຜູ້ມີອາຍຸ ມື້ນີ້ ຂ້ານ້ອຍລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງເຂົ້າສັນຍາເວທະຍິຕະນິໂຣດ (ສະມາບັດທີ່ດັບສັນຍາແລະເວທະນາ) ຢູ່ ຂ້ານ້ອຍນັ້ນບໍ່ໄດ້ຄິດວ່າ ເຮົາເຂົ້າສັນຍາເວທະຍິຕະນິໂຣດຢູ່ ຫຼື ເຂົ້າສັນຍາເວທະຍິຕະນິໂຣດແລ້ວ ຫຼື ວ່າອອກຈາກສັນຍາເວທະຍິຕະນິໂຣດແລ້ວ

ອັນແທ້ຈິງ ທ່ານພຣະສາຣີບຸດຖອນອະຫັງການ ມະມັງການ ແລະ ມານານຸໄສອອກໄດ້ດົນແລ້ວ ສັນນັ້ນ ທ່ານຈຶ່ງບໍ່ຄິດວ່າ ເຮົາເຂົ້າສັນຍາເວທະຍິຕະນິໂຣດຢູ່ ຫຼື ເຂົ້າສັນຍາເວທະຍິຕະນິໂຣດແລ້ວ ຫຼື ອອກຈາກສັນຍາເວທະຍິຕະນິໂຣດແລ້ວ

**ນິໂຣທະສະມາປັດຕິສູດທີ ໙ ຈົບ**

# ໑໐. ສຸຈິມຸຂີສູດ

## ວ່າດ້ວຍສຸຈິມຸຂີປະຣິພາຊິກາ

[໓໔໑] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ເມື່ອໃນເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນເມືອງຣາດຊະຄຶ ອາໄສເຊີງຝາແຫ່ງໜຶ່ງສັນບິນທະບາດນັ້ນ ຄັ້ງນັ້ນປະຣິພາຊິກາຊື່ສຸຈິມຸຂີ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ແລ້ວໄດ້ຖາມວ່າ ສະມະນະເປັນຫຍັງທ່ານຈຶ່ງກົ້ມໜ້າສັນຢູ່ບໍ?

ທ່ານພຣະສາຣີບຸດຕອບວ່າ ນາງ ເຮົາບໍ່ໄດ້ກົ້ມໜ້າສັນ

ສະມະນະ ຖ້າເປັນແນວນັ້ນ ທ່ານເງີຍໜ້າສັນແມ່ນບໍ?

ນາງ ເຮົາບໍ່ໄດ້ເງີຍໜ້າສັນ

ສະມະນະ ຖ້າເປັນແນວນັ້ນ ທ່ານແນມເບິ່ງທິດໃຫຍ່ສັນຢູ່ບໍ?

ນາງ ເຮົາບໍ່ໄດ້ແນມເບິ່ງທິດໃຫຍ່ສັນ

ສະມະນະ ຖ້າເປັນແນວນັ້ນ ທ່ານແນມເບິ່ງທິດນ້ອຍສັນແມ່ນບໍ?

ນາງ ເຮົາບໍ່ໄດ້ແນມເບິ່ງທິດນ້ອຍສັນ

ຂ້ານ້ອຍຖາມວ່າ ສະມະນະ ເປັນຫຍັງ? ທ່ານຈຶ່ງກົ້ມໜ້າສັນບໍ ທ່ານກໍຕອບວ່າ ເຮົາບໍ່ໄດ້ກົ້ມໜ້າສັນ

ຂ້ານ້ອຍຖາມວ່າ ຖ້າເປັນແນວນັ້ນ ທ່ານເງີຍໜ້າສັນແມ່ນບໍ? ທ່ານກໍຕອບວ່າ ເຮົາບໍ່ໄດ້ເງີຍໜ້າສັນ

ຂ້ານ້ອຍຖາມວ່າ ຖ້າເປັນແນວນັ້ນ ທ່ານແນມເບິ່ງທິດໃຫຍ່ສັນຢູ່ບໍ? ທ່ານກໍຕອບວ່າ ເຮົາບໍ່ໄດ້ແນມເບິ່ງທິດໃຫຍ່ສັນ

ຂ້ານ້ອຍຖາມວ່າ ຖ້າເປັນແນວນັ້ນ ທ່ານແນມເບິ່ງທິດນ້ອຍສັນແມ່ນບໍ? ທ່ານກໍຕອບວ່າ ເຮົາບໍ່ໄດ້ແນມເບິ່ງທິດນ້ອຍສັນ

ສະມະນະ ກໍບັດນີ້ ທ່ານສັນດ້ວຍອາການແນວໃດຢູ່ບໍ?

ນາງ ກໍສະມະນະພາມເຫຼົ່າໃດເຫຼົ່າໜຶ່ງລ້ຽງຊີວິດດ້ວຍມິດສາຊີບຍ້ອນເດຍຣັດສານວິຊາຄືວິຊາເບິ່ງພື້ນທີ່ ສະມະນະພາມເຫຼົ່ານີ້ ຮຽກໄດ້ວ່າ ກົ້ມໜ້າສັນ

ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ລ້ຽງຊີວິດດ້ວຍມິດສາຊີບຍ້ອນເດຍຣັດສານວິຊາ ຄື ວິຊາເບິ່ງດາວ ເບິ່ງເລີກ ສະມະນະພາມເຫຼົ່ານີ້ ຮຽກໄດ້ວ່າ ເງີຍໜ້າສັນ

ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ລ້ຽງຊີວິດດ້ວຍມິດສາຊີບຍ້ອນເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ ສະມະນະພາມເຫຼົ່ານີ້ ຮຽກໄດ້ວ່າ ແນມເບິ່ງທິດໃຫຍ່ສັນ

ສະມະນະພາມເຫຼົ່າໃດເຫຼົ່າໜຶ່ງ ລ້ຽງຊີວິດດ້ວຍມິດສາຊີບຍ້ອນເດຍຣັດສານວິຊາ ຄື ວິຊາເບິ່ງອະໄວຍະວະ ສະມະນະພາມເຫຼົ່ານີ້ ຮຽກໄດ້ວ່າ ແນມເບິ່ງທິດນ້ອຍສັນ

ນາງ ເຮົານັ້ນ ບໍ່ໄດ້ລ້ຽງຊີວິດດ້ວຍມິດສາຊີບຍ້ອນເດຍຣັດສານວິຊາ ຄື ວິຊາເບິ່ງພື້ນທີ່ ບໍ່ໄດ້ລ້ຽງຊີວິດດ້ວຍມິດສາຊີບຍ້ອນເດລະສານວິຊາ ຄື ວິຊາເບິ່ງດາວເບິ່ງເລີກ ບໍ່ໄດ້ລ້ຽງຊີວິດດ້ວຍມິດສາຊີບຍ້ອນເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ ບໍ່ໄດ້ລ້ຽງຊີວິດດ້ວຍມິດສາຊີບຍ້ອນເດຍຣັດສານວິຊາຄືວິຊາເບິ່ງອະໄວຍະວະ (ແຕ່) ເຮົາສະແຫວງຫາພິກສາໂດຍຖືກຕ້ອງຕາມທຳແລ້ວຈຶ່ງສັນ

ລຳດັບນັ້ນ ສຸຈິມຸຂີປະຣິພາຊິກາເຂົ້າໄປໃນນະຄອນຣາດຊະຄືແລ້ວ ປະກາດຕາມຖະໜົນສາຍໜຶ່ງໄປສູ່ອີກສາຍໜຶ່ງ ຕາມຮ່ອມໜຶ່ງໄປສູ່ອີກຮ່ອມໜຶ່ງແນວນີ້ວ່າ ທ່ານສະມະນະສາກະຍະບຸດທັງຫຼາຍສັນອາຫານທີ່ໄດ້ມາໂດຍຊອບທຳ ບໍ່ມີໂທດ ຂໍເຊີນທ່ານທັງຫຼາຍຖວາຍບິນທະບາດແກ່ສະມະນະສາກະຍະບຸດທັງຫຼາຍເທີ້ນ

**ສຸຈິມຸຂີສູດທີ ໑໐ ຈົບ**

**ສາຣີປຸດຕະສັງຍຸດ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

# ๗. ນາຄະສັງຍຸດ

## ໑. ສຸດທິກະສູດ

### ວ່າດ້ວຍກຳເນີດນາກລ້ວນ ໆ

[໓໔໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຳເນີດຂອງນາກ ໔ ປະເພດນີ້ ກຳເນີດຂອງນາກ ໔ ປະເພດ ອັນໃດແດ່? ຄື

໑. ນາກທີ່ເປັນອັນທະຊະ (ເກີດໃນໄຂ່)
໒. ນາກທີ່ເປັນຊະລາພຸຊະ (ເກີດໃນທ້ອງ)
໓. ນາກທີ່ເປັນສັງເສທະຊະ (ເກີດໃນເຖົ້າໄຄຫຼືທີ່ປຽກຊື້ນ)
໔. ນາກທີ່ເປັນໂອປະປາຕິກະ (ເກີດໃຫຍ່ຂຶ້ນທັນທີ)

ພິກຂຸທັງຫຼາຍ ກຳເນີດຂອງນາກມີ ໔ ປະເພດນີ້

**ສຸດທິກະສູດທີ ໑ ຈົບ**

## ໒. ປະນີຕະສູດ

### ວ່າດ້ວຍກຳເນີດນາກທີ່ປະນີດກວ່າກັນ

[໓໔໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຳເນີດຂອງນາກ ໔ ປະເພດນີ້ ກຳເນີດຂອງນາກ ໔ ປະເພດ ອັນໃດແດ່? ຄື

໑. ນາກທີ່ເປັນອັນທະຊະ
໒. ນາກທີ່ເປັນຊະລາພຸຊະ
໓. ນາກທີ່ເປັນສັງເສທະຊະ
໔. ນາກທີ່ເປັນໂອປະປາຕິກະ

ໃນນາກ ໔ ປະເພດນັ້ນ ນາກທີ່ເປັນຊະລາພຸຊະ ສັງເສທະຊະ ແລະໂອປະປາຕິກະປະນີດກວ່ານາກທີ່ເປັນອັນທະຊະ

ນາກທີ່ເປັນສັງເສທະຊະ ແລະໂອປະປາຕິກະ ປະນີດກວ່ານາກທີ່ເປັນອັນທະຊະແລະຊະລາພຸຊະ

ນາກທີ່ເປັນໂອປະປາຕິກະ ປະນີດກວ່ານາກທີ່ເປັນອັນທະຊະ ຊະລາພຸຊະ ແລະສັງເສທະຊະ

ພິກຂຸທັງຫຼາຍ ກຳເນີດຂອງນາກມີ ໔ ປະເພດນີ້

**ປະນີຕະສູດທີ ໔ ຈົບ**

# ໓. ອຸໂປສະຖະສູດ

## ວ່າດ້ວຍອຸໂປສົດ

[໓໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນອັນທະຊະລາງພວກ ໃນໂລກນີ້ຖືຮັກສາອຸໂປສົດແລະສະລະກາຍໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ນາກທີ່ເປັນອັນທະຊະລາງພວກໃນໂລກນີ້ມີຄວາມຄິດແນວນີ້ວ່າ ແຕ່ກ່ອນພວກເຮົາໄດ້ເປັນຜູ້ມີປົກກະຕິທຳກຳທັງ ໒ ດ້ວຍກາຍ ວາຈາ ແລະໃຈ ພວກເຮົານັ້ນມີປົກກະຕິທຳກຳທັງ ໒ ດ້ວຍກາຍ ວາຈາ ແລະໃຈ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ ຖ້າມື້ນີ້ ພວກເຮົາເພິ່ງປະພຶດສຸດຈະຣິດດ້ວຍກາຍ ວາຈາ ແລະໃຈ ເມື່ອເຮັດໄດ້ແນວນີ້ ພວກເຮົາຫຼັງຈາກຕາຍແລ້ວກໍຈະເພິ່ງໄປເກີດໃນສຸກຄະຕິໂລກສະຫວັນ ເຊີນພວກເຮົາປະພຶດສຸດຈະຣິດດ້ວຍກາຍ ວາຈາ ແລະ ໃຈໃນບັດນີ້ກັນຢູ່ເທີ້ນ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນອັນທະຊະລາງພວກໃນໂລກນີ້ຖືຮັກສາອຸໂປສົດສິນແລ້ວພົ້ນຈາກຊາດທີ່ເປັນອັນທະຊະໄດ້

**ອຸໂປສະຖະສູດທີ ໓ ຈົບ**

# ໔. ທຸຕິຍະອຸໂປສະຖະສູດ

## ວ່າດ້ວຍອຸໂປສົດ ສູດທີ ໔

[໓໔໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນຊະລາພຸຊະລາງພວກໃນໂລກນີ້ ເມື່ອຖືຮັກສາອຸໂປສົດສິນແລ້ວພົ້ນຈາກຊາດທີ່ເປັນຊະລະພຸຊະໄດ້

(ເພິ່ງຂະຫຍາຍຂໍ້ຄວາມທີ່ເຫຼືອທັງໝົດໃຫ້ພິດສະດານຄືບົດກ່ອນ)

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນຊະລາພຸຊະລາງພວກໃນໂລກນີ້ ເມື່ອຖືຮັກສາອຸໂປສົດສິນແລ້ວ ພົ້ນຈາກຊາດທີ່ເປັນຊະລະພຸຊະໄດ້

**ທຸຕິຍະອຸໂປສະຖະສູດທີ ໔ ຈົບ**

# ໕. ຕະຕິຍະອຸໂປສະຖະສູດ

## ວ່າດ້ວຍອຸໂປສົດ ສູດທີ ໓

[໓໔໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນສັງເສທະຊະລາງພວກໃນໂລກນີ້ ເມື່ອຖືຮັກສາອຸໂປສົດສິນແລ້ວ ພົ້ນຈາກຊາດທີ່ເປັນສັງເສທະຊະໄດ້

(ເພິ່ງຂະຫຍາຍຂໍ້ຄວາມທີ່ເຫຼືອທັງໝົດໃຫ້ພິດສະດານຄືບົດກ່ອນ)

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນສັງເສທະຊະລາງພວກໃນໂລກນີ້ ເມື່ອຖືຮັກສາອຸໂປສົດສິນແລ້ວພົ້ນຈາກຊາດທີ່ເປັນສັງເສທະຊະໄດ້

**ຕະຕິຍະອຸໂປສະຖະສູດທີ ໕ ຈົບ**

# ៨. ຈະຕຸດຖະອຸໂປສະຖະສູດ

## ວ່າດ້ວຍອຸໂປສົດ ສູດທີ ៨

[໓៨៧] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນໂອປະປາຕິກະລາງພວກໃນໂລກນີ້ຖືຮັກສາອຸໂປສົດ ແລະສະລະກາຍໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ນາກທີ່ເປັນໂອປະປາຕິກະລາງພວກໃນໂລກນີ້ມີຄວາມຄິດແນວນີ້ວ່າ ແຕ່ກ່ອນ ພວກເຮົາໄດ້ເປັນຜູ້ມີປົກກະຕິທຳກຳທັງ ໘ ດ້ວຍກາຍ ວາຈາ ແລະໃຈ ພວກເຮົານັ້ນມີປົກກະຕິທຳກຳທັງ ໘ ດ້ວຍກາຍ ວາຈາ ແລະໃຈ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ ຖ້າມື້ນີ້ ພວກເຮົາເພິ່ງປະພຶດສຸດຈະຣິດດ້ວຍກາຍ ວາຈາ ແລະໃຈ ເມື່ອເຮັດໄດ້ຢ່າງນີ້ ຫຼັງຈາກຕາຍແລ້ວ ພວກເຮົາກໍຈະເພິ່ງໄປເກີດໃນສຸກຄະຕິໂລກສະຫວັນ ເຊີນພວກເຮົາປະພຶດສຸດຈະຣິດດ້ວຍກາຍ ວາຈາ ແລະໃຈໃນບັດນີ້ເທີ້ນ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ນາກທີ່ເປັນໂອປະປາຕິກະລາງພວກໃນໂລກນີ້ຖືຮັກສາອຸໂປສົດ ແລະສະລະກາຍໄດ້

**ຈະຕຸດຖະອຸໂປສະຖະສູດທີ ៨ ຈົບ**

# ៩. ສຸຕະສູດ

## ວ່າດ້ວຍເລື້ອງທີ່ໄດ້ຟັງມາ

[໓៨៩] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິ

ທຳກຳທັງ ໔ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກນາກທີ່ເປັນອັນທະຊະມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ

**ສຸຕະສູດທີ ໗ ຈົບ**

# ໘. ທຸຕິຍະສຸຕະສູດ

## ວ່າດ້ວຍເລື່ອງທີ່ໄດ້ຟັງມາ ສູດທີ ໔

[໓໔໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນຊະລາພຸຊະ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນຊະລາພຸຊະ

**ທຸຕິຍະສຸຕະສູດທີ ໘ ຈົບ**

# ໙. ຕະຕິຍະສຸຕະສູດ

## ວ່າດ້ວຍເລື່ອງທີ່ໄດ້ຟັງມາ ສູດທີ ໓

[໓໕໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນສັງເສທະຊະ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນສັງເສທະຊະ

**ຕະຕິຍະສຸຕະສູດທີ ໗ ຈົບ**

## ໑໐. ຈະຕຸດຖະສຸຕະສູດ

## ວ່າດ້ວຍເລື້ອງທີ່ໄດ້ຟັງມາ ສູດທີ ໔

[๓๕๑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິທຳກຳທັງ ໔ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກນາກທີ່ເປັນໂອປະປາຕິກະ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງການຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ

**ຈະຕຸດຖະສຸຕະສູດທີ ໑໐ ຈົບ**

## ໑໑-໔໐. ອັນທະຊະທານູປະກາລສຸດຕະທະສະກະ

## ວ່າດ້ວຍຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ ໑໐ ສູດ

[๓๕๔-๓๖๑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິທຳກຳທັງ ໘ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກນາກທີ່ເປັນອັນທະຊະມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ ຈຶ່ງໃຫ້ເຂົ້າຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ

ພິກຂຸ ນີ້ແລ ເປັນເຫດ ฯລฯ ຈະເຂົ້າເຖິງ ฯລฯ ຈຶ່ງໃຫ້ນ້ຳ ฯລฯ ໃຫ້ຜ້າ ฯລฯ ໃຫ້ຍານ ฯລฯ ໃຫ້ດອກໄມ້ ฯລฯ ໃຫ້ຂອງຫອມ ฯລฯ ໃຫ້ເຄື່ອງລູບທາ ฯລฯ ໃຫ້ບ່ອນນອນ ฯລฯ ໃຫ້ບ່ອນພັກ ฯລฯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວ ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນອັນທະຊະ

**ອັນທະຊະທານູປະກາຣະສຸດຕະທະສະກະທີ ໑໑-໒໐ ຈົບ**

# ໒໑-໕໐. ຊະລາພຸຊາທິທານູປະກາຣະສຸດຕະຕິງສະກະ

## ວ່າດ້ວຍພຣະສູດ ໓໐ ສູດ ມີຊະລາພຸຊະທານູປະກາຣະສູດເປັນຕົ້ນ

[໓໒໔-໓໕໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນຊະລາພຸຊະ ฯລฯ ພວກນາກທີ່ເປັນສັງເສທະຊະ ฯລฯ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິທຳກຳທັງ ໘ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກນາກທີ່ເປັນໂອປະປາຕິກະມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ ຈຶ່ງໃຫ້ເຂົ້າ ฯລฯ ໃຫ້ນ້ຳ ฯລฯ ໃຫ້ຜ້າ ฯລฯ ໃຫ້ຍານ ฯລฯ ໃຫ້ດອກໄມ້ ฯລฯ ໃຫ້ຂອງຫອມ ฯລฯ ໃຫ້ເຄື່ອງລູບທາ ฯລฯ ໃຫ້ບ່ອນນອນ ฯລฯ ໃຫ້ບ່ອນພັກ ฯລฯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກນາກທີ່ເປັນໂອປະປາຕິກະ

(ເພິ່ງເພີ່ມສູດເວລາລະ ໑໐ ສູດ ທີ່ລະໄວ້ນີ້ເຂົ້າມາໃຫ້ເຕັມ ການຕອບບັນຫາທັງ ໔໐ ໃນກຳເນີດ ໔ ກໍເພິ່ງເພີ່ມເຂົ້າມາໃຫ້ເຕັມແບບນີ້ ເມື່ອລວມພຣະສູດທັງ ໑໐ ກັບສູດກ່ອນ ໆ ເຂົ້ານຳກັນຈຶ່ງມີ ໕໐ ສູດ)

**ຊະລາພຸຊາທິທານູປະກາຣະສຸດຕະຕິງສະກະທີ ໔໑-໕໐ ຈົບ**

**ນາຄະສັງຍຸດ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

໑. ສຸດທິກະສູດ
໒. ປະນີຕະສູດ
໓. ອຸໂປສະຖະສູດ
໔. ທຸຕິຍະອຸໂປສະຖະສູດ
໕. ຕະຕິຍະອຸໂປສະຖະສູດ
໖. ຈະຕຸດຖະອຸໂປສະຖະສູດ
໗. ສຸຕະສູດ
໘. ທຸຕິຍະສຸຕະສູດ
໙. ຕະຕິຍະສຸຕະສູດ
໑໐. ຈະຕຸດຖະສຸຕະສູດ
໑໑-໔໐. ອັນທະຊະທານູປະກາຣະສຸດຕະທະສະກະ
໔໑-໕໐. ຊະລາພຸຊາທິທານູປະກາຣະສຸດຕະຕິງສະກະ

# ໙. ສຸປັນນະສັງຍຸດ

## ໑. ສຸດທິກະສູດ

### ວ່າດ້ວຍກຳເນີດຄຸດລ້ອນ ໆ

[໓໙໒] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຳເນີດຂອງຄຸດ ໔ ປະເພດນີ້

ກຳເນີດຂອງຄຸດ ໔ ປະເພດ ອັນໃດແດ່? ຄື

໑. ຄຸດທີ່ເປັນ ອັນທະຊະ (ເກີດໃນໄຂ່)
໒. ຄຸດທີ່ເປັນ ຊະລາພຸຊະ (ເກີດໃນທ້ອງ)
໓. ຄຸດທີ່ເປັນ ສັງເສທະຊະ (ເກີດໃນເຖົ້າໄຄຫຼືທີ່ປຽກຊື້ນ)
໔. ຄຸດທີ່ເປັນ ໂອປະປາຕິກະ (ເກີດໃຫຍ່ຂື້ນເລີຍ)

ພິກຂຸທັງຫຼາຍ ກຳເນີດຂອງຄຸດ ໔ ປະເພດນີ້

**ສຸດທິກະສູດທີ ໑ ຈົບ**

## ໒. ຫະຣັນຕິສູດ

### ວ່າດ້ວຍຄຸດຈັບນາກ

[໓໙໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກ ຂຸທັງຫຼາຍ ກຳເນີດຂອງຄຸດ ໔ ປະເພດນີ້

ກຳເນີດຂອງຄຸດ ໔ ປະເພດ ອັນໃດແດ່? ຄື

໑. ຄຸດທີ່ເປັນອັນທະຊະ
໒. ຄຸດທີ່ເປັນຊະລາພຸຊະ
໓. ຄຸດທີ່ເປັນສັງເສທະຊະ
໔. ຄຸດທີ່ເປັນໂອປະປາຕິກະ

ພິກຂຸທັງຫຼາຍ ກຳເນີດຂອງຄຸດ ໔ ປະເພດນີ້

ໃນຄຸດ ໔ ຈຳພວກນັ້ນ ຄຸດທີ່ເປັນອັນທະຊະ ນຳມາກທີ່ເປັນອັນທະຊະໄປໄດ້ ແຕ່ນຳມາກທີ່ເປັນຊະລາພຸຊະ ສັງເສທະຊະ ແລະໂອປະປາຕິກະໄປບໍ່ໄດ້

ຄຸດທີ່ເປັນຊະລາພຸຊະ ນຳມາກທີ່ເປັນອັນທະຊະ ແລະຊະລາພຸຊະໄປໄດ້ ແຕ່ນຳມາກທີ່ເປັນສັງເສທະຊະ ແລະໂອປະປາຕິກະໄປບໍ່ໄດ້

ຄຸດທີ່ເປັນສັງເສທະຊະ ນຳມາກທີ່ເປັນອັນທະຊະ ຊະລາພຸຊະ ແລະສັງເສທະຊະໄປໄດ້ ແຕ່ນຳມາກທີ່ເປັນໂອປະປາຕິກະໄປບໍ່ໄດ້

ສ່ວນຄຸດທີ່ເປັນໂອປະປາຕິກະ ນຳມາກທີ່ເປັນອັນທະຊະ ຊະລາພຸຊະ ສັງເສທະຊະ ແລະໂອປະປາຕິກະໄປໄດ້

ພິກຂຸທັງຫຼາຍ ກຳເນີດຂອງຄຸດມີ ໔ ປະເພດນີ້

**ທະຣັນຕິສູດທີ ໔ ຈົບ**

## ໓. ທະວະຍະກາຣີສູດ

### ວ່າດ້ວຍຜູ້ມີປົກກະຕິທຳກຳທັງ ໔

[໓໔໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິທຳກຳທັງ ໔ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກຄຸດທີ່ເປັນອັນທະຊະມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ

**ທະວະຍະກາຣີສູດທີ ໑ ຈົບ**

# ໔-໖. ທຸຕິຍາທິທະວະຍະກາຣີສຸດຕັດຕິກະ

## ວ່າດ້ວຍພຣະສູດ ໑ ສູດ ມີທຸຕິຍະທະວະຍະກາຣີສູດເປັນຕົ້ນ

[໑໙໔-໑໙໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນຊະລາພຸຊະ ฯลฯ ພວກຄຸດທີ່ເປັນສັງເສທະຊະ ฯลฯ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິທຳກຳທັງ ໘ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກຄຸດທີ່ເປັນໂອປະປາຕິກະມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ

**ທຸຕິຍາທິທະວະຍະກາຣີສຸຕຕັດຕິກະທີ ໔-໖ ຈົບ**

# ໗-໑໖. ອັນທະຊະທານູປະກາຣະສຸດຕະທະສະກະ

## ວ່າດ້ວຍຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ ໑໐ ສູດ

[໑໙໘-໔໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະ

ອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິທຳກຳທັງ ໔ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກຄຸດທີ່ເປັນອັນທະຊະມີອາຍຸຍືນມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ ຈຶ່ງໃຫ້ເຂົ້າ ฯລฯ ໃຫ້ນ້ຳ ฯລฯ ໃຫ້ຜ້າ ฯລฯ ໃຫ້ຍານ ฯລฯ ໃຫ້ດອກໄມ້ ฯລฯ ໃຫ້ຂອງຫອມ ฯລฯ ໃຫ້ເຄື່ອງລູບທາ ฯລฯ ໃຫ້ບ່ອນນອນ ฯລฯ ໃຫ້ບ່ອນພັກ ฯລฯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນອັນທະຊະ

**ອັນທະຊະທານູປະກາຣະສຸດຕະທະສະກະທີ ໑-໑໖ ຈົບ**

## ໑໗-໔໖. ຊະລາພຸຊະທານູປະກາຣະສູດ

### ວ່າດ້ວຍຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນຊະລາພຸຊະ

[໔໐໗-໔໖໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນຊະລາພຸຊະ ฯລฯ ພວກຄຸດທີ່ເປັນສັງເສທະຊະ ฯລฯ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີປົກກະຕິທຳກຳທັງ ໔ ດ້ວຍກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ພວກຄຸດທີ່ເປັນໂອປະປາຕິກະມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ ຈຶ່ງໃຫ້ເຂົ້າ ฯລฯ ໃຫ້ນ້ຳ ฯລฯ ໃຫ້ຜ້າ ฯລฯ ໃຫ້ຍານ ฯລฯ ໃຫ້ດອກໄມ້ ฯລฯ ໃຫ້ຂອງຫອມ ฯລฯ ໃຫ້ເຄື່ອງລູບທາ ฯລฯ ໃຫ້ບ່ອນນອນ ฯລฯ ໃຫ້ບ່ອນພັກ ฯລฯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກຄຸດທີ່ເປັນໂອປະປາຕິກະ

**ຊະລາພຸຊະທານູປະກາຣະສູດທີ ໑໗-໔໖ ຈົບ**

(ດ້ວຍການຮັບໂຮມແນວນີ້ຈຶ່ງມີພຣະສູດ ໔໖ ສູດ)

**ສຸປັນນະສັງຍຸດ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

# ໑໐. ຄັນທັບພະກາຍະສັງຍຸດ

## ໑. ສຸດທິກະສູດ

### ວ່າດ້ວຍເທບຜູ້ນັບເນື່ອງໃນໝູ່ຄັນທັບພະເທບລ້ວນ ໆ

[໔໓໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຯລຯ ໄດ້ຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງເທບທັງຫຼາຍຜູ້ນັບເນື່ອງໃນໝູ່ຄັນທັບພະເທບແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ເທບທັງຫຼາຍຜູ້ນັບເນື່ອງໃນໝູ່ຄັນທັບພະເທບ ເປັນແນວໃດ?

ຄື ເທບທັງຫຼາຍສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ແກ່ນກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ມອກກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ເປືອກກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ເກັດກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ໃບກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ດອກກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ໝາກກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຣົດກໍມີ ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ກິ່ນກໍມີ

ພິກຂຸທັງຫຼາຍ ເຫຼົ່ານີ້ເຮົາຮຽກວ່າເທບທັງຫຼາຍຜູ້ນັບເນື່ອງໃນໝູ່ຄັນທັບພະເທບ

**ສຸດທິກະສູດທີ ໑ ຈົບ**

## ໒. ສຸຈະຣິຕະສູດ

### ວ່າດ້ວຍສຸດຈະຣິດ

[໔໓໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍຜູ້ນັບເນື່ອງໃນໝູ່ຄັນທັບພະເທບ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ປະພຶດສຸດຈະຣິດ

ທາງກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ເທບທັງຫຼາຍຜູ້ນັບເນື່ອງໃນໝູ່ຄັນທັບພະເທບມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ນັບເນື່ອງໃນໝູ່ຄັນທັບພະເທບຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ນັບເນື່ອງໃນໝູ່ຄັນທັບພະເທບ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ນັບເນື່ອງໃນໝູ່ຄັນທັບພະເທບ

**ສຸຈະຣິຕະສູດທີ ໘ ຈົບ**

## ໙. ມູລະຄັນທະທາຕາສູດ

## ວ່າດ້ວຍຜູ້ໃຫ້ຕົ້ນໄມ້ມີກິ່ນຢູ່ຮາກ

[໔໔໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ປະພຶດສຸດຈະຣິດທາງກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ ມີກິ່ນຢູ່ຮາກ ຈຶ່ງໃຫ້ຕົ້ນໄມ້ມີກິ່ນຢູ່ຮາກ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ

**ມູລະຄັນທະທາຕາສູດທີ ໙ ຈົບ**

# ๘-๑๘. ສາຣະຄັນທາທິທາຕາສຸດຕະນະວະກະ

## ວ່າດ້ວຍພຣະສູດ ๗ ສູດ ມີສາຣະຄັນທະທາຕາສູດເປັນຕົ້ນ

[๘๘๑-๘๘๗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ແກ່ນ ໗ລ໗

ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ມອກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ເປືອກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ເກັດ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ໃບ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ດອກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ໝາກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ຣົດ ໗ລ໗ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ກິ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ປະພຶດສຸດຈະຣິດທາງກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ແກ່ນ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ແກ່ນ ໗ລ໗

ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ມອກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ເປືອກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ເກັດ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ໃບ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ດອກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ ໝາກ ໗ລ໗
ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຣົດ ໗ລ໗ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ກິ່ນ ຈຶ່ງໃຫ້ຕົ້ນໄມ້ມີກິ່ນຢູ່ແກ່ນ ໗ລ໗ ໃຫ້ຕົ້ນໄມ້ມີກິ່ນຢູ່

ນອກ ຯລຯ ໃຫ້ຕົ້ນໄມ້ມີກິ່ນຢູ່ເປືອກ ຯລຯ ໃຫ້ຕົ້ນໄມ້ມີກິ່ນຢູ່ເກັດ ຯລຯ ໃຫ້ຕົ້ນໄມ້ມີກິ່ນຢູ່ໃບ ຯລຯ ໃຫ້ຕົ້ນໄມ້ມີກິ່ນຢູ່ດອກ ຯລຯ ໃຫ້ຕົ້ນໄມ້ມີກິ່ນຢູ່ໝາກ ຯລຯ ໃຫ້ຕົ້ນໄມ້ມີກິ່ນຢູ່ຣົດ ຯລຯ ໃຫ້ຕົ້ນໄມ້ມີກິ່ນຢູ່ກິ່ນ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ກິ່ນ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ກິ່ນ

**ສາຣະຄັນທາທິທາຕາສຸດຕະນະວະກະທີ ໔-໑໘ ຈົບ**

# ໑໓-໔໘. ມູລະຄັນທະທານູປະກາຣະສຸດຕະທະສະກະ

## ວ່າດ້ວຍພຣະສູດ ໑໐ ສູດ ມີມູລະຄັນທະທານູປະກາຣະສູດເປັນຕົ້ນ

[໔໕໐-໔໕໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ປະພຶດສຸດຈະຣິດທາງກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ເທບທັງຫຼາຍຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ ຈຶ່ງໃຫ້ເຂົ້າ ຯລຯ ໃຫ້ນໍ້າ ຯລຯ ໃຫ້ຜ້າ ຯລຯ ໃຫ້ຍານ ຯລຯ ໃຫ້ດອກໄມ້ ຯລຯ ໃຫ້ຂອງຫອມ ຯລຯ ໃຫ້ເຄື່ອງລູບທາ ຯລຯ ໃຫ້ບ່ອນນອນ ຯລຯ ໃຫ້ບ່ອນພັກ ຯລຯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ສະຖິດຢູ່ທີ່ຕົ້ນໄມ້ມີກິ່ນຢູ່ຮາກ

**ມູລະຄັນທະທານູປະກາຣະສຸດຕະທະສະກະທີ ໑໓-໔໘ ຈົບ**

# ๘๖-๑๑๘. สาธะคันทาทิทานูปะภานสุดตะนะอุติภะ

## ว่าด้วยพระสูด ๗๐ สูด มีสาธะคันทะทานูปะภาธะสูดเป็นต้น

[๔๗๐-๕๔๗] เลื้องเภิดขึ้นที่นะคอนสาวัดถี

พิภขุนั้น นั่งอยู่บ่อนที่สิมคอน ได้ทูนถามพระผู้มีพระพาภเจ้าดั่งนี้ว่า ข้าแด่พระอิงผู้จะเลิน อันใดนํ เป็นเหดเป็นปัดใจให้บุภคินลางคินในโลภนี้ หัวจากตาย แล้วจะเข้าเถิงความเป็นผู้อยู่ร่อมภับเทบทั้งหลาย ผู้สะถิดอยู่ที่ต้นไม้มีภิ่นอยู่แก่น ฯลฯ

เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่มอภ ฯลฯ
เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่เปือภ ฯลฯ
เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่เภัด ฯลฯ
เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่ใบ ฯลฯ
เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่ดอภ ฯลฯ
เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่หมาภ ฯลฯ
เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่ธิด ฯลฯ
จะเข้าเถิงความเป็นผู้อยู่ร่อมภับเทบทั้งหลาย ผู้สะถิดอยู่ที่ต้นไม้มีภิ่นอยู่ภิ่น

พระผู้มีพระพาภเจ้าตัดตอบว่า พิภขุ บุภคินลางคินในโลภนี้ปะพึดสุจะธิดทาง ภาย วาจา และใจ เขาได้ฟังมาว่า เทบทั้งหลายผู้สะถิดอยู่ที่ต้นไม้มีภิ่นอยู่ภิ่น มีอายุยืน มีผิวพันงาม มีความสุภหลาย จึ่งมีความปาถะหนาแนวนี้ว่า เฮัดแนวใดนํ หัวจากตาย แล้วขํเฮาเพิ่งเข้าเถิงภานอยู่ร่อมภับเทบทั้งหลาย ผู้สะถิดอยู่ที่ต้นไม้มีภิ่นอยู่ภิ่น จึ่งให้เข้า ฯลฯ ให้น้ำ ฯลฯ ให้ผ้า ฯลฯ ให้ยาน ฯลฯ ให้ดอภไม้ ฯลฯ ให้ของหอม ฯลฯ ให้เคื่องลูบทา ฯลฯ ให้บ่อนนอน ฯลฯ ให้บ่อนพัภ ฯลฯ ให้เคื่องไต้ หัวจากตายแล้ว จึ่งเข้าเถิงความเป็นผู้อยู่ร่อมภับเทบทั้งหลาย ผู้สะถิดอยู่ที่ต้นไม้มีภิ่นอยู่ภิ่น

พิภขุ นี้แล เป็นเหดเป็นปัดใจให้บุภคินลางคินในโลภนี้ หัวจากตายแล้วจะเข้าเถิงความเป็นผู้อยู่ร่อมภับเทบทั้งหลาย ผู้สะถิดอยู่ที่ต้นไม้มีภิ่นอยู่ภิ่น

**สาธะคันทาทิทานูปะภาธะสุดตะนะอุติภะที่ ๘๖-๑๑๘ จิบ**

(ด้อยภานธิบโฮมเข้าเป็นหมวดดียวภันแนวนี้ จึ่งมีพระสูด ๑๑๘ สูด)

**คันทับพะภายะสังยุด จิบ**

# ລວມພຣະສູດທີ່ ມີໃນສັງຍຸດນີ້ ຄື

# ๑๑. ວະລາຫະກະສັງຍຸດ

## ๑. ເທສະນາສູດ

### ວ່າດ້ວຍຊົງສະແດງເທບພວກວະລາຫະກະ

[๔๔๐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງເທບພວກວະລາຫະກະ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ເທບພວກວະລາຫະກະ ເປັນແນວໃດ?

ຄື ເທບທັງຫຼາຍທີ່ເປັນສີຕະວະລາຫະກະກໍມີ ທີ່ເປັນອຸນຫະວະລາຫະກະກໍມີ ທີ່ເປັນອັບພະວະລາຫະກະກໍມີ ທີ່ເປັນວາຕະວະລາຫະກະກໍມີ ທີ່ເປັນວັດສະວະລາຫະກະກໍມີ

ພິກຂຸທັງຫຼາຍ ເຫຼົ່ານີ້ເຮົາຮຽກວ່າ ເທບພວກວະລາຫະກະ

**ເທສະນາສູດທີ ๑ ຈົບ**

## ๘. ສຸຈະຣິຕະສູດ

### ວ່າດ້ວຍສຸດຈະຣິດ

[๔๔๑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ນັບເນື່ອງໃນໝູ່ເທບພວກວະລາຫະກະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ປະພຶດສຸດຈະຣິດທາງກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ເທບທັງຫຼາຍຜູ້ນັບເນື່ອງໃນໝູ່ວະລາຫະກະ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກ

ຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ນັບເນື່ອງໃນໝູ່ເທບພວກວະລາຫະກະ ຈຶ່ງໃຫ້ເຂົ້າ ฯລฯ ໃຫ້ນ້ຳ ฯລฯ ໃຫ້ຜ້າ ฯລฯ ໃຫ້ຍານ ฯລฯ ໃຫ້ດອກໄມ້ ฯລฯ ໃຫ້ຂອງຫອມ ฯລฯ ໃຫ້ເຄື່ອງລູບທາ ฯລฯ ໃຫ້ບ່ອນນອນ ฯລฯ ໃຫ້ບ່ອນພັກ ฯລฯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ນັບເນື່ອງໃນໝູ່ເທບພວກວະລາຫະກະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບທັງຫຼາຍ ຜູ້ນັບເນື່ອງໃນໝູ່ເທບພວກວະລາຫະກະ

**ສຸຈະຣິຕະສູດທີ ໘ ຈົບ**

# ๓-๑๘. ສິຕະວະລາຫະກະທານູປະການະສຸດຕະທະສະກະ

## ວ່າດ້ວຍພຣະສູດ ๑๐ ສູດ ມີສິຕະວະລາຫະກະທານູປະການະສູດເປັນຕົ້ນ

[๔๔๘-๔๗๑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກສິຕະວະລາຫະກະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ປະພຶດສຸດຈະຣິດທາງກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ເທບພວກສິຕະວະລາຫະກະ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວ ຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກສິຕະວະລາຫະກະ ຈຶ່ງໃຫ້ເຂົ້າ ฯລฯ ໃຫ້ນ້ຳ ฯລฯ ໃຫ້ຜ້າ ฯລฯ ໃຫ້ຍານ ฯລฯ ໃຫ້ດອກໄມ້ ฯລฯ ໃຫ້ຂອງຫອມ ฯລฯ ໃຫ້ເຄື່ອງລູບທາ ฯລฯ ໃຫ້ບ່ອນນອນ ฯລฯ ໃຫ້ບ່ອນພັກ ฯລฯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກສິຕະວະລາຫະກະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກສິຕະວະລາຫະກະ

**ສິຕະວະລາຫະກະທານູປະການະສຸດຕະທະສະກະທີ ๓-๑๘ ຈົບ**

# ໑໓-໔໘. ອຸນທະວະລາຫະກະທານູປະກາຣະສູດ

## ວ່າດ້ວຍຄວາມເປັນຜູ້ຢູ່ຮ່ວມກັບເທບພວກອຸນທະວະລາຫະກະ

[໔໗໘-໗໐໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກອຸນທະວະລາຫະກະ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກອັບພະວະລາຫະກະ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກວາຕະວະລາຫະກະ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກວັດສະວະລາຫະກະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນລາງຄົນໃນໂລກນີ້ປະພຶດສຸດຈະຣິດທາງກາຍ ວາຈາ ແລະໃຈ ເຂົາໄດ້ຟັງມາວ່າ ເທບພວກວັດສະວະລາຫະກະ ມີອາຍຸຍືນ ມີຜິວພັນງາມ ມີຄວາມສຸກຫຼາຍ ຈຶ່ງມີຄວາມປາຖະໜາແນວນີ້ວ່າ ເຮັດແນວໃດນໍ ຫຼັງຈາກຕາຍແລ້ວຂໍເຮົາເພິ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກວັດສະວະລາຫະກະ ຈຶ່ງໃຫ້ເຂົ້າ ຯລຯ ໃຫ້ນໍ້າ ຯລຯ ໃຫ້ຜ້າ ຯລຯ ໃຫ້ຍານ ຯລຯ ໃຫ້ດອກໄມ້ ຯລຯ ໃຫ້ຂອງຫອມ ຯລຯ ໃຫ້ເຄື່ອງລູບທາ ຯລຯ ໃຫ້ບ່ອນນອນ ຯລຯ ໃຫ້ບ່ອນພັກ ຯລຯ ໃຫ້ເຄື່ອງໄຕ້ ຫຼັງຈາກຕາຍແລ້ວຈຶ່ງເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກວັດສະວະລາຫະກະ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ບຸກຄົນລາງຄົນໃນໂລກນີ້ ຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທບພວກວັດສະວະລາຫະກະ

**ອຸນທະວະລາຫະກະທານູປະກາຣະສູດທີ ໑໓-໔໘ ຈົບ**

# ໔໓. ສີຕະວະລາຫະກະສູດ

## ວ່າດ້ວຍເທບພວກສີຕະວະລາຫະກະ

[໗໐໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມີຄວາມໜາວໃນການບາງເວລາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເທບພວກສີຕະວະລາຫະກະມີຢູ່ ເມື່ອໃດ ເທບເຫຼົ່ານັ້ນມີຄວາມຄິດແນວນີ້ວ່າ ເຮັດແນວໃດນໍ ພວກເຮົາເພິ່ງຍິນດີດ້ວຍຄວາມຍິນດີຂອງຕົນເອງ ເມື່ອນັ້ນ ຍ້ອນອາໄສຄວາມຕັ້ງໃຈຂອງເທບເຫຼົ່ານັ້ນ ຄວາມໜາວຈຶ່ງມີ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ມີຄວາມໜາວໃນການບາງເວລາ

**ສີຕະວະລາຫະກະສູດທີ ໔๓ ຈົບ**

# ໔໔. ອຸນຫະວະລາຫະກະສູດ

## ວ່າດ້ວຍເທບພວກອຸນຫະວະລາຫະກະ

[໖໐๓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມີຄວາມຮ້ອນໃນການບາງເວລາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເທບພວກອຸນຫະວະລາຫະກະມີຢູ່ ເມື່ອໃດ ເທບເຫຼົ່ານັ້ນມີຄວາມຄິດແນວນີ້ວ່າ ເຮັດແນວໃດນໍ ພວກເຮົາເພິ່ງຍິນດີດ້ວຍຄວາມຍິນດີຂອງຕົນເອງ ເມື່ອນັ້ນ ຍ້ອນອາໄສຄວາມຕັ້ງໃຈຂອງເທບເຫຼົ່ານັ້ນ ຄວາມຮ້ອນຈຶ່ງມີ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ມີຄວາມຮ້ອນໃນການບາງເວລາ

**ອຸນຫະວະລາຫະກະສູດທີ ໔໔ ຈົບ**

# ໔໕. ອັບພະວະລາຫະກະສູດ

## ວ່າດ້ວຍເທບພວກອັບພະວະລາຫະກະ

[໖໐໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມີໝອກໃນການບາງເວລາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເທບພວກອັບພະວະລາຫະກະມີຢູ່ ເມື່ອໃດ

ເທບເຫຼົ່ານັ້ນມີຄວາມຄິດແນວນີ້ວ່າ ເຮັດແນວໃດນໍ ພວກເຮົາເພິ່ງຍິນດີດ້ວຍຄວາມຍິນດີຂອງຕົນເອງ ເມື່ອນັ້ນ ຍ້ອນອາໄສຄວາມຕັ້ງໃຈຂອງເທບເຫຼົ່ານັ້ນ ໝອກຈຶ່ງມີ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ມີໝອກໃນການບາງເວລາ

**ອັບພະວະລາຫະກະສູດທີ ໕໔ ຈົບ**

# ໕໕. ວາດວະລາຫະກະສູດ

## ວ່າດ້ວຍເທບພວກວາດວະລາຫະກະ

[໖໐໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມີລົມໃນການບາງເວລາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເທບພວກວາຕະວະລາຫະກະມີຢູ່ ເມື່ອໃດເທບເຫຼົ່ານັ້ນມີຄວາມຄິດແນວນີ້ວ່າ ເຮັດແນວໃດນໍ ພວກເຮົາເພິ່ງຍິນດີດ້ວຍຄວາມຍິນດີຂອງຕົນເອງ ເມື່ອນັ້ນ ຍ້ອນອາໄສຄວາມຕັ້ງໃຈຂອງເທບເຫຼົ່ານັ້ນ ລົມຈຶ່ງມີ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ມີລົມໃນການບາງເວລາ

**ວາຕະວະລາຫະກະສູດທີ ໕໕ ຈົບ**

# ໕໖. ວັດສະວະລາຫະກະສູດ

## ວ່າດ້ວຍເທບພວກວັດສະວະລາຫະກະ

[໖໐໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ມີຝົນໃນການບາງເວລາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເທບພວກວັດສະວະລາຫະກະມີຢູ່ ເມື່ອໃດເທບເຫຼົ່ານັ້ນມີຄວາມຄິດແນວນີ້ວ່າ ເຮັດແນວໃດນໍ ພວກເຮົາເພິ່ງຍິນດີດ້ວຍຄວາມຍິນດີຂອງຕົນ

ເອງ ເມື່ອນັ້ນ ຍ້ອນອາໄສຄວາມຕັ້ງໃຈຂອງເທບເຫຼົ່ານັ້ນ ຝົນຈຶ່ງມີ

ພິກຂຸ ນີ້ແລ ເປັນເຫດເປັນປັດໄຈໃຫ້ມີຝົນໃນການບາງເວລາ

**ວັດສະວະລາຫະກະສູດທີ່ ໕໗ ຈົບ**

**ວະລາຫະກະສັງຍຸດ ຈົບ**

## ລວມພຣະສູດທີ່ ມີໃນສັງຍຸດນີ້ ຄື

# ໑໔. ວັດສະໂຄດຕະສັງຍຸດ

## ໑. ຣູບອັນຍານະສູດ

### ວ່າດ້ວຍຄວາມບໍ່ຮູ້ໃນຮູບ

[໒໐໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ປະຣິພາຊົກຊື່ວັດສະໂຄດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ໂລກມີບ່ອນສຸດຫຼືໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກຫຼືຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດ ອີກກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ຮູ້ໃນຮູບ ຍ້ອນຄວາມບໍ່ຮູ້ໃນເຫດເກີດແຫ່ງຮູບ ຍ້ອນຄວາມບໍ່ຮູ້ໃນຄວາມດັບແຫ່ງຮູບ ຍ້ອນຄວາມບໍ່ຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ທິດຖິຫຼາຍຢ່າງເຫຼົ່ານີ້ຈຶ່ງເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼືຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ວັດສະ ນີ້ແລ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກ ວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

**ຣູບອັນຍານະສູດທີ ໑ ຈົບ**

## ໔. ເວທະນາອັນຍານະສູດ

### ວ່າດ້ວຍຄວາມບໍ່ຮູ້ໃນເວທະນາ

[໒໐໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະໂຄດປະຣິພາຊົກນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ຮູ້ໃນເວທະນາ ຍ້ອນຄວາມບໍ່ຮູ້ໃນເຫດເກີດແຫ່ງເວທະນາ ຍ້ອນຄວາມບໍ່ຮູ້ໃນຄວາມດັບແຫ່ງເວທະນາ ຍ້ອນຄວາມບໍ່ຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ທິດຖິຫຼາຍຢ່າງເຫຼົ່ານີ້ຈຶ່ງເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ວັດສະ ນີ້ແລ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

**ເວທະນາອັນຍານະສູດທີ ໔ ຈົບ**

# ๓. ສັນຍາອັນຍານະສູດ

## ວ່າດ້ວຍຄວາມບໍ່ຮູ້ໃນສັນຍາ

[໖໐໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະໂຄດປະຣິພາຊົກນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ຮູ້ໃນສັນຍາ ຍ້ອນຄວາມບໍ່ຮູ້ໃນເຫດເກີດແຫ່ງສັນຍາ ຍ້ອນຄວາມບໍ່ຮູ້ໃນຄວາມດັບແຫ່ງສັນຍາ ຍ້ອນຄວາມບໍ່ຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັນຍາ ທິດຖິຫຼາຍຢ່າງເຫຼົ່ານີ້ຈຶ່ງເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ວັດສະ ນີ້ແລ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກ

ທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

**ສັນຍາອັນຍານະສູດທີ ໓ ຈົບ**

# ໔. ສັງຂານອັນຍານະສູດ

## ວ່າດ້ວຍຄວາມບໍ່ຮູ້ໃນສັງຂານ

[໓໑໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະໂຄດປະຣິພາຊົກນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ຮູ້ໃນສັງຂານ ຍ້ອນຄວາມບໍ່ຮູ້ໃນເຫດເກີດແຫ່ງສັງຂານ ຍ້ອນຄວາມບໍ່ຮູ້ໃນຄວາມດັບແຫ່ງສັງຂານ ຍ້ອນຄວາມບໍ່ຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ທິດຖິຫຼາຍຢ່າງເຫຼົ່ານີ້ຈຶ່ງເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ວັດສະ ນີ້ແລ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍ ຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

**ສັງຂານອັນຍານະສູດທີ ໔ ຈົບ**

# ໕. ວິນຍານອັນຍານະສູດ

## ວ່າດ້ວຍຄວາມບໍ່ຮູ້ໃນວິນຍານ

[໓໑໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະໂຄດປະຣິພາຊົກນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ຮູ້ໃນວິນຍານ ຍ້ອນຄວາມບໍ່ຮູ້ໃນເຫດເກີດແຫ່ງວິນຍານ ຍ້ອນຄວາມບໍ່ຮູ້ໃນຄວາມດັບແຫ່ງວິນຍານ ຍ້ອນຄວາມບໍ່ຮູ້ໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ທິດຖິຫຼາຍຢ່າງເຫຼົ່ານີ້ຈຶ່ງເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ວັດສະ ນີ້ແລ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກ ວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

**ວິນຍານອັນຍານະສູດທີ ໕ ຈົບ**

# ໖-໑໐. ຣູບອະທັດສະນາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຣູບອະທັດສະນະສູດເປັນຕົ້ນ

[໖໑໘-໖໑໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະໂຄດປະຣິພາຊົກນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ເຫັນໃນຣູບ ຯລຯ ຍ້ອນຄວາມບໍ່ເຫັນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຣູບ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ເຫັນໃນ ເວທະນາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ເຫັນໃນ ສັນຍາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ເຫັນໃນ ສັງຂານ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ເຫັນໃນ ວິນຍານ ຯລຯ ຍ້ອນຄວາມບໍ່ເຫັນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ຯລຯ

**ຣູບອະທັດສະນາທິສຸດຕະປັນຈະກະທີ ໖-໑໐ ຈົບ**

## ໑໑-໑໕. ຣູບອະນະພິສະມະຍາທິສຸດຕະປັນຈະກະ

### ວ່າດ້ວຍພຣະສູດ ໕ ສູດ ມີຣູບອະນະພິສະມະຍະສູດເປັນຕົ້ນ

[໖໑໗-໖໔໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ວັດສະ ຍ້ອນຄວາມບໍ່ຣູ້ແຈ້ງໃນຣູບ ຯລຯ ຍ້ອນຄວາມບໍ່ຣູ້ແຈ້ງໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຣູບ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຣູ້ແຈ້ງໃນ ເວທະນາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຣູ້ແຈ້ງໃນ ສັນຍາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຣູ້ແຈ້ງໃນ ສັງຂານ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຣູ້ແຈ້ງໃນ ວິນຍານ ຯລຯ

**ຣູບອະນະພິສະມະຍາທິສຸດຕະປັນຈະກະທີ ໑໑-໑໕ ຈົບ**

# ໑໖-໒໐. ຮູບອະນະນຸໂພທາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຮູບອະນະນຸໂພທະສູດເປັນຕົ້ນ

[໖໔໘-໖໔໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະໂຄດປະຣິພາຊົກນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ຮູ້ທັນໃນຮູບ ຯລຯ ຍ້ອນຄວາມບໍ່ຮູ້ ທັນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຮູ້ທັນໃນ ເວທະນາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຮູ້ທັນໃນ ສັນຍາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຮູ້ທັນໃນສັງຂານ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະ ຍ້ອນຄວາມບໍ່ຮູ້ທັນໃນ ວິນຍານ ຯລຯ ຍ້ອນຄວາມບໍ່ຮູ້ທັນໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ຯລຯ

**ຮູບອະນະນຸໂພທາທິສຸດຕະປັນຈະກະທີ ໑໖-໒໐ ຈົບ**

# ໒໑-໒໕. ຮູບອັບປະຕິເວທາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຮູບອັບປະຕິເວທະສູດເປັນຕົ້ນ

[໖໔໗-໖໕໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ
ວັດສະໂຄດປະຣິພາຊົກທູນຖາມວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ແທງຕະຫຼອດໃນຮູບ ຯລຯ ຍ້ອນຄວາມບໍ່ແທງຕະຫຼອດໃນວິນຍານ ຯລຯ

**ຮູບອັບປະຕິເວທາທີສຸດຕະປັນຈະກະທີ ໒໑-໒໕ ຈົບ**

# ໒໖-໓໐. ຮູບອະສັນລັກຂະນາທີສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຮູບອະສັນລັກຂະນະສູດເປັນຕົ້ນ

[໖໓໒-໖໓໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວັດສະ ຍ້ອນຄວາມບໍ່ກຳນົດໃນຮູບ ຯລຯ ຍ້ອນຄວາມບໍ່ກຳນົດໃນວິນຍານ ຯລຯ

**ຮູບອະສັນລັກຂະນາທີສຸດຕະປັນຈະກະທີ ໒໖-໓໐ ຈົບ**

# ໓໑-໓໕. ຮູບອະນຸປະລັກຂະນາທີສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຮູບອະນຸປະລັກຂະນະສູດເປັນຕົ້ນ

[໖໓໗-໖໔໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວັດສະ ຍ້ອນຄວາມບໍ່ເຂົ້າໄປກຳນົດໃນຮູບ ຯລຯ ຍ້ອນຄວາມບໍ່ເຂົ້າໄປກຳນົດໃນວິນຍານ ຯລຯ

**ຮູບອະນຸປະລັກຂະນາທີສຸດຕະປັນຈະກະທີ ໓໑-໓໕ ຈົບ**

# ໓໖-໔໐. ຮູບອັບປັດຈຸປະລັກຂະນາທີສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຮູບອັບປັດຈຸປະລັກຂະນະສູດເປັນຕົ້ນ

[໖໔໒-໖໔໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວັດສະ ຍ້ອນຄວາມບໍ່ເຂົ້າໄປກຳນົດສະເພາະໃນຮູບ

ຯລຯ ຍ້ອນຄວາມບໍ່ເຂົ້າໄປກຳນົດສະເພາະໃນວິນຍານ ຯລຯ

**ຮູບອັບປັດຈຸປະລັກຂະນາທິສຸດຕະປັນຈະກະທີ ໓໖-໔໐ ຈົບ**

# ໔໑-໔໕. ຮູບອະສະມະເປກຂະນາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຮູບອະສະມະເປກຂະນະສູດເປັນຕົ້ນ

[໖໔໗-໖໕໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວັດສະ ຍ້ອນຄວາມບໍ່ເພ່ງໃນຮູບ ຯລຯ ຍ້ອນຄວາມບໍ່ເພ່ງໃນວິນຍານ ຯລຯ

**ຮູບອະສະມະເປກຂະນາທິສຸດຕະປັນຈະກະທີ ໔໑-໔໕ ຈົບ**

# ໔໖-໕໐. ຮູບອັບປັດຈຸເປກຂະນາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີຮູບອັບປັດຈຸເປກຂະນະສູດເປັນຕົ້ນ

[໖໕໒-໖໕໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວັດສະ ຍ້ອນຄວາມບໍ່ເຂົ້າໄປເພ່ງສະເພາະໃນຮູບ ຯລຯ ຍ້ອນຄວາມບໍ່ເຂົ້າໄປເພ່ງສະເພາະໃນວິນຍານ ຯລຯ

**ຮູບອັບປັດຈຸເປກຂະນາທິສຸດຕະປັນຈະກະທີ ໔໖-໕໐ ຈົບ**

# ໕໑-໕໔. ຮູບອັບປັດຈັກຂະກຳມາທິສຸດຕະຈະຕຸກກະ

## ວ່າດ້ວຍພຣະສູດ ໔ ສູດ ມີຮູບອັບປັດຈັກຂະກຳມະສູດເປັນຕົ້ນ

[໖໕໗-໖໖໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ວັດສະໂຄດປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນ

ຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ຍ້ອນຄວາມບໍ່ເຫັນປະຈັກໃນຮູບ ຍ້ອນຄວາມບໍ່ເຫັນປະຈັກໃນເຫດເກີດແຫ່ງຮູບ ຍ້ອນຄວາມບໍ່ເຫັນປະຈັກໃນຄວາມດັບແຫ່ງຮູບ ຍ້ອນຄວາມບໍ່ເຫັນປະຈັກໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຮູບ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະ ຍ້ອນຄວາມບໍ່ເຫັນປະຈັກໃນເວທະນາ ຯລຯ ຍ້ອນຄວາມບໍ່ເຫັນປະຈັກໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະ ຍ້ອນຄວາມບໍ່ເຫັນປະຈັກໃນສັນຍາ ຯລຯ ຍ້ອນຄວາມບໍ່ເຫັນປະຈັກໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັນຍາ ຯລຯ

ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ວັດສະ ຍ້ອນຄວາມບໍ່ເຫັນປະຈັກໃນສັງຂານ ຯລຯ ຍ້ອນຄວາມບໍ່ເຫັນປະຈັກໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ ຯລຯ

**ຮູບອັບປັດຈັກຂະກຳມາທີສຸດຕະຈະຕຸກກະທີ ໕໑-໕໔ ຈົບ**

## ໕໕. ວິນຍານອັບປັດຈັກຂະກຳມະສູດ

### ວ່າດ້ວຍຄວາມບໍ່ເຫັນປະຈັກໃນວິນຍານ

[໖໖໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ວັດສະ ຍ້ອນຄວາມບໍ່ເຫັນປະຈັກໃນວິນຍານ ຍ້ອນຄວາມບໍ່ເຫັນປະຈັກໃນເຫດເກີດແຫ່ງວິນຍານ ຍ້ອນຄວາມບໍ່ເຫັນປະຈັກໃນຄວາມດັບແຫ່ງວິນຍານ ຍ້ອນຄວາມບໍ່ເຫັນປະຈັກໃນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ ທິດຖິຫຼາຍຢ່າງເຫຼົ່ານີ້ຈຶ່ງເກີດຂຶ້ນໃນໂລກວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ຯລຯ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ວັດສະ ນີ້ແລ ເປັນເຫດເປັນປັດໄຈໃຫ້ທິດຖິຫຼາຍຢ່າງເຫຼົ່ານີ້ເກີດຂຶ້ນໃນໂລກ ວ່າ ໂລກທ່ຽງຫຼືໂລກບໍ່ທ່ຽງ ໂລກມີບ່ອນສຸດຫຼືໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະບໍ່ເກີດອີກຫຼືຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

**ວິນຍານອັບປັດຈັກຂະກຳມະສູດທີ ໕໕ ຈົບ**

(ດ້ວຍການຮິບໂຮມເຂົ້າເປັນໝວດດຽວກັນຈຶ່ງມີພຣະສູດ ໕໕ ສູດ)

**ວັດສະໂຄດຕະສັງຍຸດ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

໑. ຣູບອັນຍານະສູດ
໒. ສັນຍາອັນຍານະສູດ
໕. ວິນຍານອັນຍານະສູດ
໖-໑໐. ຣູບອະທັດສະນາທິສຸດຕະປັນຈະກະ
໑໑-໑໕. ຣູບອະນະພິສະມະຍາທິສຸດຕະປັນຈະກະ
໑໖-໒໐. ຣູບອະນະນຸໂພທາທິສຸດຕະປັນຈະກະ
໒໑-໒໕. ຣູບອັບປະຕິເວທາທິສຸດຕະປັນຈະກະ
໒໖-໓໐. ຣູບອະສັນລັກຂະນາທິສຸດຕະປັນຈະກະ
໓໑-໓໕. ຣູບອະນຸປະລັກຂະນາທິສຸດຕະປັນຈະກະ
໓໖-໔໐. ຣູບອັບປັດຈຸປະລັກຂະນາທິສຸດຕະປັນຈະກະ
໔໑-໔໕. ຣູບອະສະມະເປກຂະນາທິສຸດຕະປັນຈະກະ
໔໖-໕໐. ຣູບອັບປັດຈຸເປກຂະນາທິສຸດຕະປັນຈະກະ
໕໑-໕໔. ຣູບອັບປັດຈັກຂະກຳມາທິສຸດຕະຈະຕຸກກະ
໕໕. ວິນຍານອັບປັດຈັກຂະກຳມະສູດ

໒. ເວທະນາອັນຍານະສູດ
໔. ສັງຂານອັນຍານະສູດ

# ໑໓. ຊານະສັງຍຸດ

## ໑. ສະມາທິມູລະກະສະມາປັດຕິສູດ

### ວ່າດ້ວຍການເຂົ້າສະມາທິອັນເປັນມູນ

[໓໖໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ພວກໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ສະຫຼາດໃນການເຂົ້າສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນການເຂົ້າສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນການເຂົ້າສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ ຍອດເນີຍໃສຊາວໂລກຖືວ່າເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ແມ່ນສັນໃດ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນການເຂົ້າສະມາທິ ກໍຄືກັນສັນນັ້ນ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະສະມາປັດຕິສູດທີ ໑ ຈົບ**

# ๘. ສະມາທິມູລະກະຖິຕິສູດ

## ວ່າດ້ວຍການຕັ້ງຢູ່ໃນສະມາທິອັນເປັນມູນ

[໓໓໓] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຢູ່ໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຢູ່ໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ສະຫຼາດໃນການຕັ້ງຢູ່ໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນການຕັ້ງຢູ່ໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະ ສະຫຼາດໃນການຕັ້ງຢູ່ໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ ຍອດເນີຍໃສຊາວໂລກຖືວ່າເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ແມ່ນສັນໃດ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນການຕັ້ງຢູ່ໃນສະມາທິ ກໍຄືກັນສັນນັ້ນ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະຖິຕິສູດທີ ໘ ຈົບ**

# ໙. ສະມາທິມູລະກະວຸດຖານະສູດ

## ວ່າດ້ວຍການອອກຈາກສະມາທິອັນເປັນມູນ

[໓໓໔] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ສະຫຼາດໃນການອອກຈາກສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການອອກຈາກສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ສະຫຼາດໃນການອອກຈາກສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນການອອກຈາກສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນການອອກຈາກສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ບ່ອນສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະວຸດຖານະສູດທີ ໓ ຈົບ**

# ໔. ສະມາທິມູລະກະກັນລິຕະສູດ

## ວ່າດ້ວຍຄວາມພ້ອມໃນສະມາທິອັນເປັນມູນ

[໓໓໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ສະຫຼາດໃນຄວາມພ້ອມໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນຄວາມພ້ອມໃນສະມາ

ທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ສະຫຼາດໃນຄວາມພ້ອມໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນຄວາມພ້ອມໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນຄວາມພ້ອມໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະກັນລິຕະສູດທີ 4 ຈົບ**

# ៥. ສະມາທິມູລະກະອາຣຳມະນະສູດ

## ວ່າດ້ວຍອາລົມໃນສະມາທິອັນເປັນມູນ

[໕໕໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ສະຫຼາດໃນອາລົມໃນສະມາທິ

໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອາລົມໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ສະຫຼາດໃນອາລົມໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນອາລົມໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນອາລົມໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະອາຣຳມະນະສູດທີ ๕ ຈົບ**

# ໖. ສະມາທິມູລະກະໂຄຈະຣະສູດ

## ວ່າດ້ວຍໂຄຈອນໃນສະມາທິອັນເປັນມູນ

[໖໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ສະຫຼາດໃນໂຄຈອນໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ສະຫຼາດໃນໂຄຈອນໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນໂຄຈອນໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະ ສະຫຼາດໃນໂຄຈອນໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະໂຄຈະຣະສູດທີ ໖ ຈົບ**

# ၅. ສະມາທິມູລະກະອະພິນີຫາຣະສູດ

## ວ່າດ້ວຍອະພິນີຫານໃນສະມາທິອັນເປັນມູນ

[໓໒໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ສະຫຼາດໃນອະພິນີຫານໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອະພິນີຫານໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ສະຫຼາດໃນອະພິນີຫານໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນອະພິນີຫານໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະສະຫຼາດໃນອະພິນີຫານໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະອະພິນີຫາຣະສູດທີ ၅ ຈົບ**

# ၆. ສະມາທິມູລະກະສັກກັດຈະກາຣີສູດ

## ວ່າດ້ວຍຜູ້ເຮັດໂດຍເຄົາລົບໃນສະມາທິອັນເປັນມູນ

[໓໒໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ເຮັດໂດຍເຄົາລົບໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດໂດຍເຄົາລົບໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ເຮັດໂດຍເຄົາລົບໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະເຮັດໂດຍເຄົາລົບໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະເຮັດໂດຍເຄົາລົບໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະສັກກັດຈະກາຣີສູດທີ ๗ ຈົບ**

## ๘. ສະມາທິມູລະກະສາຕັດຈະກາຣີສູດ

### ວ່າດ້ວຍຜູ້ທຳຄວາມພຽນຕໍ່ເນື່ອງໃນສະມາທິອັນເປັນມູນ

[໓໗໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະທຳຄວາມພຽນຕໍ່ເນື່ອງໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະທຳຄວາມພຽນຕໍ່ເນື່ອງໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ฯລฯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະສາຕັດຈະກາຣິສູດທີ ๙ ຈົບ**

# ໑໐. ສະມາທິມູລະກະສັບປາຍະກາຣິສູດ

## ວ່າດ້ວຍຜູ້ເຮັດສັບປາຍະໃນສະມາທິອັນເປັນມູນ

[໗໗໑] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແຕ່ບໍ່ເຮັດສັບປາຍະໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດສັບປາຍະໃນສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະບໍ່ເຮັດສັບປາຍະໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະເຮັດສັບປາຍະໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການຕັ້ງຈິດໝັ້ນໃນສະມາທິ ແລະ ເຮັດສັບປາຍະໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ฯລฯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາທິມູລະກະສັບປາຍະກາຣິສູດທີ ໑໐ ຈົບ**

**(ສະມາທິມູລະກະ ຈົບ)**

# ໑໑. ສະມາປັດຕິມູລະກະຖິຕິສູດ

## ວ່າດ້ວຍການເຂົ້າແລະການຕັ້ງຢູ່ໃນສະມາທິອັນເປັນມູນ

[໙໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຢູ່ໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຢູ່ໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ສະຫຼາດໃນການຕັ້ງຢູ່ໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະສະຫຼາດໃນການຕັ້ງຢູ່ໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການເຂົ້າສະມາທິ ແລະສະຫຼາດໃນການຕັ້ງຢູ່ໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະຖິຕິສູດທີ ໑໑ ຈົບ**

# ໑໒. ສະມາປັດຕິມູລະກະວຸດຖານະສູດ

## ວ່າດ້ວຍການເຂົ້າແລະການອອກຈາກສະມາທິອັນເປັນມູນ

[໙໗໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້
ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

๓. บุກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ສະຫຼາດໃນການອອກຈາກສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການອອກຈາກສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ
໙. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ສະຫຼາດໃນການອອກຈາກສະມາທິ
໘. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະສະຫຼາດໃນການອອກຈາກສະມາທິ

ໃນບຸກຄົນ ໘ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະວຸດຖານະສູດທີ ໑໔ ຈົບ**

## ໑໙. ສະມາປັດຕິມູລະກະກັນລິຕະສູດ

### ວ່າດ້ວຍການເຂົ້າແລະຄວາມພ້ອມໃນສະມາທິອັນເປັນມູນ

[໕໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໘ ຈຳພວກນີ້ ບຸກຄົນຜູ້ໄດ້ຊານ ໘ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ສະຫຼາດໃນຄວາມພ້ອມໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນຄວາມພ້ອມໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ
໙. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ສະຫຼາດໃນຄວາມພ້ອມໃນສະມາທິ
໘. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະສະຫຼາດໃນຄວາມພ້ອມໃນສະມາທິ

ໃນບຸກຄົນ ໘ ຈຳພວກນັ້ນ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະກັນລິຕະສູດທີ ໑໙ ຈົບ**

# ໑໔. ສະມາປັດຕິມູລະກະອາຣຳມະນະສູດ

## ວ່າດ້ວຍການເຂົ້າແລະອາລົມໃນສະມາທິອັນເປັນມູນ

[໓໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ສະຫຼາດໃນອາລົມໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອາລົມໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ສະຫຼາດໃນອາລົມໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະສະຫຼາດໃນອາລົມໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ໆລໆ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະອາຣຳມະນະສູດທີ ໑໔ ຈົບ**

# ໑໕. ສະມາປັດຕິມູລະກະໂຄຈະຣະສູດ

## ວ່າດ້ວຍການເຂົ້າແລະໂຄຈອນໃນສະມາທິອັນເປັນມູນ

[໓໗໕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່

ບໍ່ສະຫຼາດໃນໂຄຈອນໃນສະມາທິ

໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ສະຫຼາດໃນໂຄຈອນໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະສະຫຼາດໃນໂຄຈອນໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະໂຄຈະຣະສູດທີ ໑໕ ຈົບ**

# ໑໖. ສະມາປັດຕິມູລະກະອະພິນີຫາຣະສູດສູດ

## ວ່າດ້ວຍການເຂົ້າແລະອະພິນີຫານໃນສະມາທິອັນເປັນມູນ

[ຜາກງ] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ສະຫຼາດໃນອະພິນີຫານໃນສະມາທິ

໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອະພິນີຫານໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ສະຫຼາດໃນອະພິນີຫານໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະສະຫຼາດໃນອະພິນີຫານໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະອະພິນີຫາຣະສູດສູດທີ ໑໖ ຈົບ**

# ໑໗. ສະມາປັດຕິມູລະກະສັກກັດຈະສູດ

## ວ່າດ້ວຍການເຂົ້າແລະຄວາມເຄົາລົບໃນສະມາທິອັນເປັນມູນ

[໕໗໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ເຮັດໂດຍເຄົາລົບໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດໂດຍເຄົາລົບໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ເຮັດໂດຍເຄົາລົບໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະເຮັດໂດຍເຄົາລົບໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະສັກກັດຈະສູດທີ່ ໑໗ ຈົບ**

# ໑໘. ສະມາປັດຕິມູລະກະສາຕັດຈະສູດ

## ວ່າດ້ວຍການເຂົ້າແລະຄວາມພຽນຕໍ່ເນື່ອງໃນສະມາທິອັນເປັນມູນ

[໕໗໙] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່

ບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ

໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແລະທຳຄວາມພຽນຕໍ່ເນື່ອງໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະສາຕັດຈະສູດທີ ໑໙ ຈົບ**

# ໑໙. ສະມາປັດຕິມູລະກະສັບປາຍະກາຣີສູດ

## ວ່າດ້ວຍການເຂົ້າແລະຜູ້ເຮັດສັບປາຍະໃນສະມາທິອັນເປັນມູນ

[໕໘໐] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິ ແຕ່ບໍ່ເຮັດສັບປາຍະໃນສະມາທິ

໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດສັບປາຍະໃນສະມາທິ ແຕ່ບໍ່ສະຫຼາດໃນການເຂົ້າສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການເຂົ້າສະມາທິ ແລະບໍ່ເຮັດສັບປາຍະໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການເຂົ້າສະມາທິແລະເຮັດສັບປາຍະໃນສະມາທິ

ພິກຂຸທັງຫຼາຍ ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການເຂົ້າສະມາທິ ແລະເຮັດສັບປາຍະໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ທີ່ສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ ຍອດເນີຍໃສຊາວໂລກຖືວ່າເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ແມ່ນສັນໃດ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນການເຂົ້າສະມາທິ ແລະເຮັດສັບປາຍະໃນສະມາທິ ກໍຄືກັນສັນນັ້ນ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

**ສະມາປັດຕິມູລະກະສັບປາຍະກາຣິສູດທີ ໑໙ ຈົບ**

(ສະມາປັດຕິມູລະກະ ຈົບ)

# ໒໐-໒໗. ຖິຕິລູລະກະວຸດຖານະສຸດຕາທິອັດຖະກະ

## ວ່າດ້ວຍພຣະສູດ ໘ ສູດ ມີຖິຕິມູລະກະວຸຕຖານະສູດເປັນຕົ້ນ

[໓໘໑-໓໘໘] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຢູ່ໃນສະມາທິ ແຕ່ບໍ່ສະຫຼາດໃນການອອກຈາກສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການອອກຈາກສະມາທິ ແຕ່ບໍ່ສະຫຼາດໃນການຕັ້ງຢູ່ໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການຕັ້ງຢູ່ໃນສະມາທິ ແລະບໍ່ສະຫຼາດໃນການອອກຈາກສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການຕັ້ງຢູ່ໃນສະມາທິ ແລະສະຫຼາດໃນການອອກຈາກສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ຯລຯ ແລະຍິ່ງໃຫຍ່ບ່ອນສຸດ

**ຖິຕິລູລະກະວຸດຖານະສຸດຕາທິອັດຖະກະທີ ໒໐-໒໗ ຈົບ**

(ເພິ່ງຂະຫຍາຍພຣະສູດທັງ ໘ ສູດ ຈົນເຖິງຖິຕິມູລະກະສັບປາຍກາຣິສູດທີ ໒໗ ໃຫ້ເຕັມຄືສູດຕົ້ນ ຖິຕິມູລະກະ ຈົບ)

# ๘๗-๓๘. ອຸດຖານະມູລະກະກັນລິຕະສຸດຕາທິສັດຕະກະ

## ວ່າດ້ວຍພຣະສູດ ๖ ສູດ ມີວຸຕຖານມູລະກະກັລລິດສູດເປັນຕົ້ນ

[๒๗๙-๒๙๕] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ๔ ຈຳພວກນີ້

ບຸກຄົນຜູ້ໄດ້ຊານ ๔ ຈຳພວກ ໃດແດ່? ຄື

๑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການອອກຈາກສະມາທິ ແຕ່ບໍ່ສະຫຼາດໃນຄວາມພ້ອມໃນສະມາທິ
๒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນຄວາມພ້ອມໃນສະມາທິ ແຕ່ບໍ່ສະຫຼາດໃນການອອກຈາກສະມາທິ
๓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນການອອກຈາກສະມາທິ ແລະບໍ່ສະຫຼາດໃນຄວາມພ້ອມໃນສະມາທິ
๔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນການອອກຈາກສະມາທິ ແລະສະຫຼາດໃນຄວາມພ້ອມໃນສະມາທິ

ໃນບຸກຄົນ ๔ ຈຳພວກນັ້ນ ฯລฯ ແລະຍິ່ງໃຫຍ່ທີ່ສຸດ

**ອຸດຖານະມູລະກະກັນລິຕະສຸດຕາທິສັດຕະກະທີ ๘๗-๓๘ ຈົບ**

(ເພິ່ງຂະຫຍາຍພຣະສູດທັງ ๖ ສູດ ຈົນເຖິງອຸດຖານະມູລະກະສັບປາຍະກາຣີສູດທີ ๓๘ ໃຫ້ເຕັມຄືສູດຕົ້ນ ອຸດຖານະມູລະກະ ຈົບ)

# ๓๕-๔๐. ກັນລິຕະມູລະກະອາຣຳມະນະສຸດຕາທິສັກກະ

## ວ່າດ້ວຍພຣະສູດ ๒ ສູດ ມີກັນລິຕະມູລະກະອາຣຳມະນະສູດເປັນຕົ້ນ

[๒๙๒-๖๐๑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ฯລฯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນຄວາມພ້ອມໃນສະມາທິ ແຕ່ບໍ່ສະຫຼາດໃນອາລົມໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອາລົມໃນສະມາທິ ແຕ່ບໍ່ສະຫຼາດໃນຄວາມພ້ອມໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນຄວາມພ້ອມໃນສະມາທິ ແລະບໍ່ສະຫຼາດໃນອາລົມໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນຄວາມພ້ອມໃນສະມາທິ ແລະສະຫຼາດໃນອາລົມໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານ ຯລຯ ສູງສຸດ ແລະຍິ່ງໃຫຍ່ບ່ອນສຸດ

**ກັນລິຕະມູລະກະອາຣຳມະນະສຸດຕາທິສັກກະທີ ໓໕-໔໐ ຈົບ**

(ເພິ່ງຂະຫຍາຍພຣະສູດອີກ ໖ ສູດ ຈົນເຖິງກັນລິຕະມູລະກະສັບປາຍະກາຣີສູດທີ ໔໐ ໃຫ້ເຕັມຄືສູດຕົ້ນ ກັນລິຕະມູລະກະ ຈົບ)

# ໔໑-໔໕. ອາຣຳມະນະມູລະກະໂຄຈະຣະສຸດຕາທິປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີອາຣຳມະນະມູລະກະໂຄຈະຣະສູດດເປັນຕົ້ນ

[໗໐໔-໗໐໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອາລົມໃນສະມາທິ ແຕ່ບໍ່ສະຫຼາດໃນໂຄຈອນໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນໃນສະມາທິ ແຕ່ບໍ່ສະຫຼາດໃນອາລົມໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນອາລົມໃນສະມາທິ ແລະບໍ່ສະຫຼາດໃນໂຄຈອນໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອາລົມໃນສະມາທິ ແລະສະຫຼາດໃນໂຄຈອນໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານ ຯລຯ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

**ອາຣຳມະນະມູລະກະໂຄຈະຣະສຸດຕາທີປັນຈະກະທີ ໔໑-໔໕ ຈົບ**

(ເພິ່ງຂະຫຍາຍພຣະສູດທັງ ໕ ສູດ ຈົນເຖິງອາຣຳມະນະມູລະກະສັບປາຍະກາຣີສູດທີ ໔ ໕ ໃຫ້ເຕັມຄືສູດຕົ້ນ ໆ ອາຣຳມະນະມູລະກະຈົບ)

# ໔໖-໔໙. ໂຄຈະຣະມູລະກະອະພິນິຫາຣະສຸດຕາທິຈະຕຸກກະ

## ວ່າດ້ວຍພຣະສູດ ໔ ສູດ ມີໂຄຈອນມູລະກະອະພິນິຫານສູດເປັນຕົ້ນ

[໓໐໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນໃນສະມາທິ ແຕ່ບໍ່ສະຫຼາດໃນອະພິນິຫານໃນສະມາທິ

໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອະພິນິຫານໃນສະມາທິ ແຕ່ບໍ່ສະຫຼາດໃນໂຄຈອນໃນສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນໂຄຈອນໃນສະມາທິ ແລະບໍ່ສະຫຼາດໃນອະພິນິຫານໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນໃນສະມາທິ ແລະສະຫຼາດໃນອະພິນິຫານໃນສະມາທິ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ ຍອດເນີຍໃສຊາວໂລກຖືວ່າເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ແມ່ນສັນໃດ ບຸກຄົນຜູ້ໄດ້ຊານທີ່ສະຫຼາດໃນໂຄຈອນໃນສະມາທິ ແລະສະຫຼາດໃນອະພິນິຫານໃນສະມາທິ ກໍຄືກັນສັນນັ້ນ ຯລຯ ສູງສຸດ ແລະຍິ່ງໃຫຍ່ທີ່ສຸດ

[໓໐໒] ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນສະມາທິ ແຕ່ບໍ່ເຮັດໂດຍເຄົາລົບໃນສະມາທິ ຯລຯ

ເພິ່ງຕື່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານ

[໓໐໙] ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນໃນສະມາທິ ແຕ່ບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ ຯລຯ

[໗໑໐] ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນໂຄຈອນໃນສະມາທິ ແຕ່ບໍ່ເຮັດສັບປາຍະໃນສະມາທິ ຯລຯ

**ໂຄຈະຣະມູລະກະອະພິນິຫາຣະສຸດຕາທິຈະຕຸກກະທີ ໔໖-໔໙ ຈົບ**

**(ໂຄຈອນມູລະກະ ຈົບ)**

# ໕໐-໕໔. ອະພິນິຫາຣະມູລະກະສັກກັດຈະສຸດຕາທິຕິກະ

## ວ່າດ້ວຍພຣະສູດ ໓ ສູດ ມີອະພິນິຫາຣະມູລະກະສັກກັດຈະສູດເປັນຕົ້ນ

[໗໑໑] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອະພິນິຫານໃນສະມາທິ ແຕ່ບໍ່ເຮັດໂດຍເຄົາລົບໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດໂດຍເຄົາລົບໃນສະມາທິ ແຕ່ບໍ່ສະຫຼາດໃນອະພິນິຫານໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ສະຫຼາດໃນອະພິນິຫານໃນສະມາທິ ແລະບໍ່ເຮັດໂດຍເຄົາລົບໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອະພິນິຫານໃນສະມາທິ ແລະເຮັດໂດຍເຄົາລົບໃນສະມາທິ

ພິກຂຸທັງຫຼາຍ ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານ ຯລຯ ແລະຍິ່ງໃຫຍ່ທີ່ສຸດ

[໗໑໒] ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອະພິນິຫານໃນສະມາທິ ແຕ່ບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ ຯລຯ

[໗໑໓] ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ສະຫຼາດໃນອະພິນີຫານໃນສະມາທິ ແຕ່ບໍ່ເຮັດສັບປາຍະໃນສະມາທິ ຯລຯ

**ອະພິນີຫາຣະມູລະກະສັກກັດຈະສຸດຕາທິຕິກະທີ ໕໐-໕໘ ຈົບ**

**(ອະພິນີຫານມູລະກະ ຈົບ)**

# ໕໓-໕໔. ສັກກັດຈະມູລະກະສາຕັດຈະກາຣີສູດ

## ວ່າດ້ວຍພຣະສູດ ໘ ສູດ ມີສັກກັດຈະມູລະກະສາຕັດຈະກາຣີສູດເປັນຕົ້ນ

[໗໑໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດໂດຍເຄົາລົບໃນສະມາທິ ແຕ່ບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ
໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແຕ່ບໍ່ເຮັດໂດຍເຄົາລົບໃນສະມາທິ
໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ເຮັດໂດຍເຄົາລົບໃນສະມາທິ ແລະບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ
໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດໂດຍເຄົາລົບໃນສະມາທິ ແລະທຳຄວາມພຽນຕໍ່ເນື່ອງໃນສະມາທິ

ພິກຂຸທັງຫຼາຍ ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານ ຯລຯ ສູງສຸດແລະຍິ່ງໃຫຍ່ບ່ອນສຸດ

[໗໑໕] ຯລຯ

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດໂດຍເຄົາລົບໃນສະມາທິ ແຕ່ບໍ່ເຮັດ ສັບປາຍະໃນສະມາທິ ຯລຯ

**ສັກກັດຈະມູລະກະສາຕັດຈະກາຣີສູດທີ ໕໓-໕໔ ຈົບ**

# ໕໔. ສາຕັດຈະມູລະກະສັບປາຍະກາຣີສູດ

## ວ່າດ້ວຍຄວາມພຽນຕໍ່ເນື່ອງແລະຜູ້ເຮັດສັບປາຍະໃນສະມາທິອັນເປັນມູນ

[໗໑໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ໄດ້ຊານ ໔ ຈຳພວກນີ້ ບຸກຄົນຜູ້ໄດ້ຊານ ໔ ຈຳພວກ ພວກໃດແດ່? ຄື

໑. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແຕ່ບໍ່ເຮັດສັບປາຍະໃນສະມາທິ

໒. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ເຮັດສັບປາຍະໃນສະມາທິ ແຕ່ບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ

໓. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ບໍ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແລະບໍ່ເຮັດສັບປາຍະໃນສະມາທິ

໔. ບຸກຄົນຜູ້ໄດ້ຊານລາງຄົນໃນໂລກນີ້ ເປັນຜູ້ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແລະເຮັດສັບປາຍະໃນສະມາທິ

ໃນບຸກຄົນ ໔ ຈຳພວກນັ້ນ ບຸກຄົນຜູ້ໄດ້ຊານທີ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແລະເຮັດສັບປາຍະໃນສະມາທິ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດ ແລະຍິ່ງໃຫຍ່ບ່ອນສຸດ

ພິກຂຸທັງຫຼາຍ ນົມສົດຈາກແມ່ງົວ ນົມສົ້ມຈາກນົມສົດ ເນີຍຂຸ້ນຈາກນົມສົ້ມ ເນີຍໃສຈາກເນີຍຂຸ້ນ ຍອດເນີຍໃສຈາກເນີຍໃສ ຍອດເນີຍໃສຊາວໂລກຖືວ່າເປັນເລີດໃນບັນດານົມສົດເປັນຕົ້ນນັ້ນ ແມ່ນສັນໃດ ບຸກຄົນຜູ້ໄດ້ຊານທີ່ທຳຄວາມພຽນຕໍ່ເນື່ອງໃນສະມາທິ ແລະເຮັດສັບປາຍະໃນສະມາທິ ກໍຄືກັນສັນນັ້ນ ເປັນຜູ້ເລີດ ປະເສີດ ເປັນປະທານ ສູງສຸດແລະຍິ່ງໃຫຍ່ບ່ອນສຸດ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະດຳຣັດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າດ້ວຍອາການຢ່າງນີ້ແລ

**ສາຕັດຈະມູລະກະສັບປາຍະກາຣີສູດທີ ໕໔ ຈົບ**

(ເພິ່ງຂະຫຍາຍຄວາມພຣະສູດທັງ ໕໔ ນີ້ໃຫ້ພິດສະດານ)

**ຊານະສັງຍຸດ ຈົບ**

## ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

໑. ສະມາທິມູລະກະສະມາປັດຕິສູດ
໒. ສະມາທິມູລະກະຖິຕິສູດ
໓. ສະມາທິມູລະກະວຸດຖານະສູດ
໔. ສະມາທິມູລະກະກັນລິຕະສູດ
໕. ສະມາທິມູລະກະອາຣຳມະນະສູດ
໖. ສະມາທິມູລະກະໂຄຈະຣະສູດ
໗. ສະມາທິມູລະກະອະພິນີຫາຣະສູດ
໘. ສະມາທິມູລະກະສັກກັດຈະກາຣີສູດ
໙. ສະມາທິມູລະກະສາຕັດຈະກາຣີສູດ
໑໐. ສະມາທິມູລະກະສັບປາຍະກາຣີສູດ
໑໑. ສະມາປັດຕິມູລະກະຖິຕິສູດ
໑໒. ສະມາປັດຕິມູລະກະວຸດຖານະສູດ
໑໓. ສະມາປັດຕິມູລະກະກັນລິຕະສູດ
໑໔. ສະມາປັດຕິມູລະກະອາຣຳມະນະສູດ
໑໕. ສະມາປັດຕິມູລະກະໂຄຈະຣະສູດ
໑໖. ສະມາປັດຕິມູລະກະອະພິນີຫາຣະສູດສູດ
໑໗. ສະມາປັດຕິມູລະກະສັກກັດຈະສູດ
໑໘. ສະມາປັດຕິມູລະກະສາຕັດຈະສູດ
໑໙. ສະມາປັດຕິມູລະກະສັບປາຍະກາຣີສູດ

໒໐-໒໗. ຖິຕິລູລະກະວຸດຖານະສຸດຕາທິອັດຖະກະ
໒໘-໓໔. ວຸດຖານະມູລະກະກັນລິຕະສຸດຕາທິສັດຕະກະ
໓໕-໔໐. ກັນລິຕະມູລະກະອາຣຳມະນະສຸດຕາທິສັກກະ
໔໑-໔໕. ອາຣຳມະນະມູລະກະໂຄຈະຣະສຸດຕາທິປັນຈະກະ
໔໖-໔໙. ໂຄຈະຣະມູລະກະອະພິນີຫາຣະສຸດຕາທິຈະຕຸກກະ
໕໐-໕໒. ອະພິນີຫາຣະມູລະກະສັກກັດຈະສຸດຕາທິຕິກະ
໕໓-໕໔. ສັກກັດຈະມູລະກະສາຕັດຈະກາຣີສູດ
໕໕. ສາຕັດຈະມູລະກະສັບປາຍະກາຣີສູດ

**ຂັນທະວາຣະວັກທີ ໓ ຈົບ**

## ລວມສັງຍຸດທີ່ມີໃນຂັນທະວາຣະວັກນີ້ ຄື

໑. ຂັນທະສັງຍຸດ
໒. ຣາທະສັງຍຸດ
໓. ທິດຖິສັງຍຸດ
໔. ໂອກກັນຕະສັງຍຸດ
໕. ອຸບປາທະສັງຍຸດ
໖. ກິເລສະສັງຍຸດ
໗. ສາຣີປຸດຕະສັງຍຸດ
໘. ນາຄະສັງຍຸດ
໙. ສຸປັນນະສັງຍຸດ
໑໐. ຄັນທັບພະກາຍະສັງຍຸດ
໑໑. ວະລາຫະກະສັງຍຸດ
໑໒. ວັດສະໂຄດຕະສັງຍຸດ
໑໓. ຊານະສັງຍຸດ

**ຂັນທະວາຣະວັກສັງຍຸດ ຈົບບໍລິບູນ**